[໘] ນະອາຣຳມະນະປັດໄຈ ກັບເຫຕຸປັດໄຈ ມີ ໑ ວາຣະ
ນະອະທິປະຕິປັດໄຈ ,, ມີ ໑ ວາຣະ ຯລຯ
ໂນວິຄະຕະປັດໄຈ ,, ມີ ໑ ວາຣະ

**ອະນຸໂລມປັດຈະນີຍະ ຈົບ**

[໙] ອາຣຳມະນະປັດໄຈ ກັບນະເຫຕຸປັດໄຈ ມີ ໑ ວາຣະ
ອະນັນຕະຣະປັດໄຈ ,, ມີ ໑ ວາຣະ ຯລຯ
ອະວິຄະຕະປັດໄຈ ,, ມີ ໑ ວາຣະ

**ປັດຈະນີຍານຸໂລມ ຈົບ**

(ສະຫະຊາຕະວານເໝືອນກັບປະຕິດຈະວານ)

## ກ. ສັບປັດຈະຍະທຸກະ ໒. ປັດຈະຍະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

[ກ] ສະພາວະທຳທີ່ມີປັດໄຈປຸງແຕ່ງເຮັດສະພາວະທຳທີ່ມີປັດໄຈປຸງແຕ່ງໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໑ ແລະຈິດຕະສະມຸດຖານຮູບເຮັດຂັນ ໑ ທີ່ມີປັດໄຈ ປຸງແຕ່ງໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ໃນປະຕິສົນທິຂະນະ ຯລຯ ຫະໄທວັດຖຸເຮັດຂັນໃຫ້ເປັນປັດໄຈເກີດຂຶ້ນ ຂັນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ເຮັດມະຫາພູຕະຮູບ ໑ ຯລຯ ຂັນທີ່ມີປັດໄຈປຸງແຕ່ງເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ

ສະພາວະທຳທີ່ມີປັດໄຈປຸງແຕ່ງເຮັດສະພາວະທຳທີ່ມີປັດໄຈປຸງແຕ່ງໃຫ້ເປັນປັດໄຈເກີດຂຶ້ນຍ້ອນອາຣຳມະນະປັດໄຈ (ຫຍໍ້)

(ເພິ່ງຂະຫຍາຍປັດຈະຍະວານ ນິດສະຍະວານ ສັງສັດຖະວານ ແລະສຳປະຍຸດຕະວານໃຫ້ພິສະດານແນວນີ້ ທຸກປັດໄຈມີປັດໄຈລະ ໑ ວາຣະເທົ່ານັ້ນ)

## ກ. ສັບປັດຈະຍະທຸກະ ກ. ບັນຫາວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

## ເຫຕຸປັດໄຈ

[ຕ] ສະພາວະທຳທີ່ມີປັດໄຈປຸງແຕ່ງເປັນປັດໄຈ ແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍເຫຕຸປັດໄຈ ໃນປະຕິສົນທິຂະນະ ຯລຯ

## ອາຣຳມະນະປັດໄຈ

[໗] ສະພາວະທຳທີ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວພິຈາລະນາກຸສົນນັ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກຈາກຊານແລ້ວ ຯລຯ ພຣະອະຣິຍະອອກຈາກມັກແລ້ວ ພິຈາລະນາມັກ ພິຈາລະນາຜົນ ພິຈາລະນາກິເລດທີ່ລະໄດ້ແລ້ວ ພິຈາລະນາກິເລດທີ່ຂົ່ມໄດ້ແລ້ວ ຮູ້ກິເລດທີ່ເຄີຍເກີດຂຶ້ນ ບຸກຄົນເຫັນແຈ້ງຈັກຂຸ ຯລຯ ຫະໄທວັດຖຸ ຯລຯ ຂັນທີ່ມີປັດໄຈປຸງແຕ່ງໂດຍເປັນສະພາວະບໍ່ທ່ຽງ ຯລຯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ ຮູ້ຈິດຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍຈິດທີ່ມີປັດໄຈປຸງແຕ່ງດ້ວຍເຈໂຕປະຣິຍະຍານ ອາກາສານັນຈາຍະຕະນະເປັນປັດໄຈແກ່ວິນຍານັນຈາຍະຕະນະ ຯລຯ ອາກິນຈັນຍາຍະຕະນະເປັນປັດໄຈແກ່ເນວະສັນຍານາສັນຍາຍະຕະນະ ຯລຯ ຮູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ໂຜດຖັບພາຍະຕະນະ ເປັນປັດໄຈແກ່ກາຍວິນຍານ ຯລຯ ຂັນທີ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ອິດທິວິທະຍານ ເຈໂຕປະຣິຍະຍານ ປຸບເພນິວາສານຸດສະຕິຍານ ຍະຖາກຳມູປະຄະຍານ ອະນາຄະຕັງສະຍານ ແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ (໑)

ສະພາວະທຳທີ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍອາຣຳມະນະປັດໄຈ ໄດ້ແກ່ ພຣະອະຣິຍະພິຈາລະນານິບພານ ນິບພານເປັນປັດໄຈແກ່ໂຄຕະຣະພູ ໂວທານ ມັກ ຜົນ ແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ (໑)

## ອະທິປະຕິປັດໄຈ

[໑໐] ສະພາວະທຳທີ່ມີປັດໄຈປຸງແຕ່ງເປັນປັດໄຈ ແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິ ແລະສະຫະຊາຕາທິປະຕິ

ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວພິຈາລະນາກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ອອກຈາກຊານ ຯລຯ ພຣະອະຣິຍະອອກຈາກມັກ ແລ້ວພິຈາລະນາມັກໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາຜົນໃຫ້ເປັນອາລົມຢ່າງໜັກແໜ້ນ ຯລຯ ບຸກຄົນຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ຯລຯ ຂັນທີ່ມີປັດໄຈປຸງແຕ່ງໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບໂດຍອະທິປະຕິປັດໄຈ (໑)

ສະພາວະທຳທີ່ບໍ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣຳມະນາທິປະຕິ ໄດ້ແກ່ ພຣະອະຣິຍະພິຈາລະນານິບພານໃຫ້ເປັນອາລົມຢ່າງໜັກແໜ້ນ ນິບພານເປັນປັດໄຈແກ່ໂຄຕະຣະພູ ໂວທານ ມັກແລະຜົນໂດຍອະທິປະຕິປັດໄຈ (໑)

## ອະນັນຕະຣະປັດໄຈເປັນຕົ້ນ

[໑໑] ສະພາວະທຳທີ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍອະນັນຕະຣະປັດໄຈ ฯลฯ ເປັນປັດໄຈໂດຍອຸປະນິດສະຍະປັດໄຈ ฯลฯ (ບົດທີ່ມີອຸປະນິດສະຍະປັດໄຈເປັນມູນ ມີ ໘ ວາຣະ) ເປັນປັດໄຈໂດຍປຸເຣຊາຕະປັດໄຈ ฯลฯ ເປັນປັດໄຈໂດຍອະວິຄະຕະປັດໄຈ (ທຸກປັດໄຈ ມີປັດໄຈລະ ໑ ວາຣະເທົ່ານັ້ນ)

## ໑. ປັດຈະຍານຸໂລມ ໘. ສັງຂະຍາວານ

## ສຸດທະໄນ

| | | |
|---|---|---|
| [໑໘] ເຫຕຸປັດໄຈ | ມີ | ໑ ວາຣະ |
| ອາຣຳມະນະປັດໄຈ | ມີ | ໘ ວາຣະ |
| ອະທິປະຕິປັດໄຈ | ມີ | ໘ ວາຣະ |
| ອະນັນຕະຣະປັດໄຈ | ມີ | ໑ ວາຣະ |
| ສະມະນັນຕະຣະປັດໄຈ | ມີ | ໑ ວາຣະ |
| ສະຫະຊາຕະປັດໄຈ | ມີ | ໑ ວາຣະ |
| ອັນຍະມັນຍະປັດໄຈ | ມີ | ໑ ວາຣະ |
| ນິດສະຍະປັດໄຈ | ມີ | ໑ ວາຣະ |
| ອຸປະນິດສະຍະປັດໄຈ | ມີ | ໘ ວາຣະ |
| ປຸເຣຊາຕະປັດໄຈ | ມີ | ໑ ວາຣະ |

(ທຸກປັດໄຈມີປັດໄຈລະ ໑ ວາຣະ)

| | | |
|---|---|---|
| ອະວິຄະຕະປັດໄຈ | ມີ | ໑ ວາຣະ (ເພິ່ງນັບແນວນີ້) |

**ອະນຸໂລມ ຈົບ**

## ໔. ປັດຈະນີຍຸດທາຣະ

[໑໓] ສະພາວະທຳທີ່ມີປັດໄຈປຸງແຕ່ງເປັນປັດໄຈແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍ ອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ປຸເຣຊາຕະປັດໄຈ ປັດສາຊາຕະປັດໄຈ ກຳມະປັດໄຈ ອາຫາຣະປັດໄຈ ແລະອິນທະຣິຍະປັດໄຈ (໑)

ສະພາວະທຳທີ່ບໍ່ມີປັດໄຈປຸງແຕ່ງເປັນປັດໄຈ ແກ່ສະພາວະທຳທີ່ມີປັດໄຈປຸງແຕ່ງໂດຍ ອາຣຳມະນະປັດໄຈແລະອຸປະນິດສະຍະປັດໄຈ (໑)

## ໔. ປັດຈະຍະປັດຈະນີຍະ ໔. ສັງຂະຍາວານ

| | | |
|---|---|---|
| [໑໔] ນະເຫຕຸປັດໄຈ | ມີ | ໔ ວາຣະ |
| ນະອາຣຳມະນະປັດໄຈ | ມີ | ໑ ວາຣະ |
| ນະອະທິປະຕິປັດໄຈ | ມີ | ໔ ວາຣະ |
| ນະອະນັນຕະຣະປັດໄຈ | ມີ | ໔ ວາຣະ |
| ນະສະມະນັນຕະຣະປັດໄຈ | ມີ | ໔ ວາຣະ ຯລຯ |
| ນະອຸປະນິດສະຍະປັດໄຈ | ມີ | ໔ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ | ໔ ວາຣະ ຯລຯ |
| ໂນວິຄະຕະປັດໄຈ | ມີ | ໔ ວາຣະ |
| ໂນອະວິຄະຕະປັດໄຈ | ມີ | ໔ ວາຣະ (ເພິ່ງນັບແບບນີ້) |

**ປັດຈະນີຍະ ຈົບ**

## ໕. ປັດຈະຍານຸໂລມປັດຈະນີຍະ

### ເຫຕຸທຸກະໄນ

| | | | |
|---|---|---|---|
| [໑໕] ນະອາຣຳມະນະປັດໄຈ | ກັບເຫຕຸປັດໄຈ | ມີ | ໑ ວາຣະ |
| ນະອະທິປະຕິປັດໄຈ | ,, | ມີ | ໑ ວາຣະ |
| ນະອະນັນຕະຣະປັດໄຈ | ,, | ມີ | ໑ ວາຣະ |
| ນະສະມະນັນຕະຣະປັດໄຈ | ,, | ມີ | ໑ ວາຣະ |
| ນະອັນຍະມັນຍະປັດໄຈ | ,, | ມີ | ໑ ວາຣະ |
| ນະອຸປະນິດສະຍະປັດໄຈ | ,, | ມີ | ໑ ວາຣະ ຯລຯ |
| ນະສຳປະຍຸດຕະປັດໄຈ | ,, | ມີ | ໑ ວາຣະ |

| | | |
|---|---|---|
| ນະວິບປະຍຸດຕະປັດໄຈ | ,, | ມີ ໑ ວາຣະ |
| ໂນນັດຖິປັດໄຈ | ,, | ມີ ໑ ວາຣະ |
| ໂນວິຄະຕະປັດໄຈ | ,, | ມີ ໑ ວາຣະ (ເພິ່ງນັບແນວນີ້) |

**ອະນຸໂລມປັດຈະນີຍະ ຈົບ**

## ໔. ປັດຈະຍະປັດຈະນີຍານຸໂລມ

### ນະເຫຕຸທຸກະໄນ

| | | | |
|---|---|---|---|
| [໑໖] ອາຣົມມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໔ ວາຣະ | |
| ອະທິປະຕິປັດໄຈ | ,, | ມີ ໔ ວາຣະ | |
| ອະນັນຕະຣະປັດໄຈ | ,, | ມີ ໑ ວາຣະ ຯລຯ | |
| ອຸປະນິດສະຍະປັດໄຈ | ,, | ມີ ໔ ວາຣະ | |
| ປຸເຣຊາຕະປັດໄຈ | ,, | ມີ ໑ ວາຣະ ຯລຯ | |
| ອະວິຄະຕະປັດໄຈ | ,, | ມີ ໑ ວາຣະ (ເພິ່ງນັບແນວນີ້) | |

**ປັດຈະນີຍານຸໂລມ ຈົບ ສັບປັດຈະຍະທຸກະ ຈົບ**

## ໗. ສັງຂະຕະທຸກະ ໑. ປະຕິດຈະວານ

### ເຫຕຸປັດໄຈ

[໑໗] ສະພາວະທຳທີ່ປັດໄຈປຸງແຕ່ງອາໄສສະພາວະທຳທີ່ປັດໄຈປຸງແຕ່ງເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ປັດໄຈປຸງແຕ່ງເກີດຂຶ້ນ ຯລຯ ໃນປະຕິສົນທິຂະນະ ຯລຯ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ຯລຯ ອາໄສມະຫາພູຕະຮູບ ໑ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບອາໄສ ມະຫາພູຕະຮູບເກີດຂຶ້ນ (ເພິ່ງນັບທຸກະນີ້ໃຫ້ເໝືອນກັບສັບປັດຈະຍະທຸກະ ບໍ່ມີຂໍ້ແຕກຕ່າງກັນ)

**ສັງຂະຕະທຸກະ ຈົບ**

# ໗. ສະນິທັດສະນະທຸກະ ໑. ປະຕິດຈະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໑໗] ສະພາວະທຳທີ່ເຫັນບໍ່ໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ອາໄສຂັນ ໑ ທີ່ເຫັນບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຂັນ ໓ ແລະກະຕັດຕະຮູບທີ່ເຫັນບໍ່ໄດ້ອາໄສ ຂັນ ໑ ທີ່ເຫັນບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ຯລຯ ອາໄສມະຫາພູຕະຮູບ ໑ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນບໍ່ໄດ້ອາໄສມະຫາພູຕະຮູບເກີດຂຶ້ນ (໑)

ສະພາວະທຳທີ່ເຫັນໄດ້ ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນ ຍ້ອນເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບທີ່ເຫັນໄດ້ອາໄສຂັນທີ່ເຫັນບໍ່ໄດ້ເກີດຂຶ້ນ ໃນປະຕິສົນທິຂະນະ ຯລຯ ຈິດຕະສະມຸດຖານຮູບ ແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນໄດ້ອາໄສມະຫາພູຕະຮູບເກີດຂຶ້ນ (໒)

ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ອາໄສຂັນ ໑ ທີ່ເຫັນບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ ຈິດຕະສະມຸດຖານຮູບ ແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນໄດ້ ແລະເຫັນບໍ່ໄດ້ອາໄສມະຫາພູຕະຮູບເກີດຂຶ້ນ (໓)

### ອາຣົມມະນະປັດໄຈ

[໑໙] ສະພາວະທຳທີ່ເຫັນບໍ່ໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນ ຍ້ອນອາຣົມມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ເຫັນບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ ຂັນອາໄສຫະໄທວັດຖຸເກີດຂຶ້ນ (໑)

### ອະທິປະຕິປັດໄຈ

[໒໐] ສະພາວະທຳທີ່ເຫັນບໍ່ໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ອາໄສຂັນ ໑ ທີ່ເຫັນບໍ່ໄດ້ເກີດຂຶ້ນ

ຯລຯ ອາໄສຂັນ ໔ ຯລຯ ມະຫາພູຕະຣູບ ໓ ອາໄສມະຫາພູຕະຣູບ ໑ ເກີດຂຶ້ນ ຯລຯ ອາໄສມະຫາພູຕະຣູບ ໔ ຯລຯ ຈິດຕະສະມຸດຖານຣູບທີ່ເປັນອຸປາທາຍະຣູບເຊິ່ງເຫັນບໍ່ໄດ້ອາໄສມະຫາພູຕະຣູບເກີດຂຶ້ນ (໑)

ສະພາວະທຳທີ່ເຫັນໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນ ຍ້ອນອະທິປະຕິປັດໄຈ ໄດ້ແກ່ ຈິດຕະສະມຸດຖານຣູບທີ່ເຫັນໄດ້ອາໄສຂັນທີ່ເຫັນບໍ່ໄດ້ເກີດຂຶ້ນ ຈິດຕະສະມຸດຖານຣູບທີ່ເປັນອຸປາທາຍະຣູບເຊິ່ງເຫັນໄດ້ອາໄສມະຫາພູຕະຣູບເກີດຂຶ້ນ (໔)

ສະພາວະທຳທີ່ເຫັນໄດ້ ແລະທີ່ເຫັນບໍ່ໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນຍ້ອນອະທິປະຕິປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຣູບທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ອາໄສຂັນ ໑ ທີ່ເຫັນບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໔ ຯລຯ ຈິດຕະສະມຸດຖານຣູບທີ່ເປັນອຸປາທາຍະຣູບ ເຊິ່ງເຫັນໄດ້ແລະເຫັນບໍ່ໄດ້ອາໄສມະຫາພູຕະຣູບເກີດຂຶ້ນ (໓) (ຫຍໍ້ ເພິ່ງເພີ່ມທຸກາປັດໄຈ)

## ໑. ປັດຈະຍານຸໂລມ ໔. ສັງຂະຍາວານ

### ສຸດທະໄນ

| | |
|---|---|
| [໔໑] ເຫຕຸປັດໄຈ | ມີ ໓ ວາຣະ |
| ອາຣຳມະນະປັດໄຈ | ມີ ໑ ວາຣະ |
| ອະທິປະຕິປັດໄຈ | ມີ ໓ ວາຣະ |
| ອະນັນຕະຣະປັດໄຈ | ມີ ໑ ວາຣະ |
| ສະມະນັນຕະຣະປັດໄຈ | ມີ ໑ ວາຣະ |
| ສະຫະຊາຕະປັດໄຈ | ມີ ໓ ວາຣະ |
| ອັນຍະມັນຍະປັດໄຈ | ມີ ໑ ວາຣະ |
| ນິດສະຍະປັດໄຈ | ມີ ໓ ວາຣະ |
| ອຸປະນິດສະຍະປັດໄຈ | ມີ ໑ ວາຣະ |
| ປຸເຣຊາຕະປັດໄຈ | ມີ ໑ ວາຣະ |
| ອາເສວະນະປັດໄຈ | ມີ ໑ ວາຣະ |
| ກຳມະປັດໄຈ | ມີ ໓ ວາຣະ |
| ວິປາກະປັດໄຈ | ມີ ໓ ວາຣະ |

(ທຸກາປັດໄຈມີປັດໄຈລະ ໓ ວາຣະ)

| | |
|---|---|
| ມັກຄະປັດໄຈ | ມີ ໓ ວາຣະ |
| ສຳປະຍຸດຕະປັດໄຈ | ມີ ໑ ວາຣະ |

| | |
|---|---|
| ວິບປະຍຸດຕະປັດໄຈ | ມີ ๓ ວາຣະ |
| ອັດຖິປັດໄຈ | ມີ ๓ ວາຣະ |
| ນັດຖິປັດໄຈ | ມີ ໑ ວາຣະ |
| ວິຄະຕະປັດໄຈ | ມີ ໑ ວາຣະ |
| ອະວິຄະຕະປັດໄຈ | ມີ ๓ ວາຣະ (ເພິ່ງນັບແນວນີ້) |

**ອະນຸໂລມ ຈົບ**

## ໔. ປັດຈະຍະປັດຈະນີຍະ ໑. ວິພັງຄະວານ

## ນະເຫຕຸປັດໄຈ

[໔໔] ສະພາວະທຳທີ່ເຫັນບໍ່ໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ຂັນ ๓ ແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ອາໄສຂັນ ໑ ທີ່ບໍ່ມີເຫດເຊິ່ງເຫັນບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໔ ຯລຯ ໃນປະຕິສົນທິຂະນະທີ່ເປັນອະເຫຕຸກະ ຯລຯ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ຯລຯ ອາໄສມະຫາພູຕະຮູບ ໑ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນບໍ່ໄດ້ອາໄສມະຫາພູຕະຮູບເກີດຂຶ້ນ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ຯລຯ ໂມຫະທີ່ປະກອບດ້ວຍວິຈິກິດສາແລະທີ່ປະກອບດ້ວຍອຸດທັດຈະອາໄສຂັນທີ່ປະກອບດ້ວຍວິຈິກິດສາແລະທີ່ປະກອບດ້ວຍອຸດທັດຈະເກີດຂຶ້ນ (໑)

ສະພາວະທຳທີ່ເຫັນໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນ ຍ້ອນນະເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບທີ່ເຫັນໄດ້ອາໄສຂັນທີ່ບໍ່ມີເຫດເຊິ່ງເຫັນບໍ່ໄດ້ເກີດຂຶ້ນ ໃນປະຕິສົນທິຂະນະ ຯລຯ ຈິດຕະສະມຸດຖານຮູບ ແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນໄດ້ອາໄສມະຫາພູຕະຮູບເກີດຂຶ້ນ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນໄດ້ອາໄສມະຫາພູຕະຮູບເກີດຂຶ້ນ (໒)

ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ອາໄສສະພາວະທຳທີ່ເຫັນບໍ່ໄດ້ເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ຂັນ ๓ ແລະຈິດຕະສະມຸດຖານຮູບທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ອາໄສຂັນ ໑ ທີ່ບໍ່ມີເຫດເຊິ່ງເຫັນບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໔ ຯລຯ ໃນປະຕິສົນທິຂະນະ ຯລຯ ອາໄສມະຫາພູຕະຮູບ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ກະຕັດຕະຮູບທີ່ເປັນອຸປາທາຍະຮູບ ເຊິ່ງເຫັນໄດ້ແລະເຫັນບໍ່ໄດ້ອາໄສມະຫາພູຕະຮູບເກີດຂຶ້ນ (๓) (ເພິ່ງເພີ່ມທຸກປັດໄຈແນວນີ້)

## ໘. ປັດຈະຍະປັດຈະນີຍະ ໘. ສັງຂະຍາວານ

## ສຸດທະໄນ

[໘໓] ນະເຫຕຸປັດໄຈ ມີ ໓ ວາຣະ
ນະອາຣໍາມະນະປັດໄຈ ມີ ໓ ວາຣະ
ນະອະທິປະຕິປັດໄຈ ມີ ໓ ວາຣະ
ນະອະນັນຕະຣະປັດໄຈ ມີ ໓ ວາຣະ
ນະສະມະນັນຕະຣະປັດໄຈ ມີ ໓ ວາຣະ
ນະອັນຍະມັນຍະປັດໄຈ ມີ ໓ ວາຣະ
ນະອຸປະນິດສະຍະປັດໄຈ ມີ ໓ ວາຣະ
ນະປຸເຣຊາຕະປັດໄຈ ມີ ໓ ວາຣະ
ນະປັດສາຊາຕະປັດໄຈ ມີ ໓ ວາຣະ
ນະອາເສວະນະປັດໄຈ ມີ ໓ ວາຣະ
ນະກໍາມະປັດໄຈ ມີ ໓ ວາຣະ
ນະວິປາກະປັດໄຈ ມີ ໓ ວາຣະ
ນະອາຫາຣະປັດໄຈ ມີ ໓ ວາຣະ
ນະອິນທະຣິຍະປັດໄຈ ມີ ໓ ວາຣະ
ນະຊານະປັດໄຈ ມີ ໓ ວາຣະ
ນະມັກຄະປັດໄຈ ມີ ໓ ວາຣະ
ນະສໍາປະຍຸດຕະປັດໄຈ ມີ ໓ ວາຣະ
ນະວິບປະຍຸດຕະປັດໄຈ ມີ ໓ ວາຣະ
ໂນນັດຖິປັດໄຈ ມີ ໓ ວາຣະ
ໂນວິຄະຕະປັດໄຈ ມີ ໓ ວາຣະ (ເພິ່ງນັບແນວນີ້)

**ປັດຈະນີຍະ ຈົບ**

## ໓. ປັດຈະຍານຸໂລມປັດຈະນີຍະ

## ເຫຕຸທຸກະໄນ

[໘໔] ນະອາຣໍາມະນະປັດໄຈ ກັບເຫຕຸປັດໄຈ ມີ ໓ ວາຣະ
ນະອະທິປະຕິປັດໄຈ ,, ມີ ໓ ວາຣະ
(ທຸກປັດໄຈ ມີປັດໄຈລະ ໓ ວາຣະ)

| | | |
|---|---|---|
| ນະກຳມະປັດໄຈ | ,, | ມີ ໑ ວາຣະ |
| ນະວິປາກະປັດໄຈ | ,, | ມີ ໓ ວາຣະ |
| ນະສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| ນະວິບປະຍຸດຕະປັດໄຈ | ,, | ມີ ໑ ວາຣະ |
| ໂນນັດຖິປັດໄຈ | ,, | ມີ ໓ ວາຣະ |
| ໂນວິຄະຕະປັດໄຈ | ,, | ມີ ໓ ວາຣະ |

**ອະນຸໂລມປັດຈະນີຍະ ຈົບ**

# ໔. ປັດຈະຍະປັດຈະນີຍານຸໂລມ

## ນະເຫຕຸທຸກະໄນ

| | | | |
|---|---|---|---|
| [໔໕] | ອາຣຳມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໑ ວາຣະ |
| | ອະນັນຕະຣະປັດໄຈ | ,, | ມີ ໑ ວາຣະ |
| | ສະມະນັນຕະຣະປັດໄຈ | ,, | ມີ ໑ ວາຣະ |
| | ສະຫະຊາຕະປັດໄຈ | ,, | ມີ ໓ ວາຣະ |
| | ອັນຍະມັນຍະປັດໄຈ | ,, | ມີ ໑ ວາຣະ |
| | ນິດສະຍະປັດໄຈ | ,, | ມີ ໓ ວາຣະ |
| | ອຸປະນິດສະຍະປັດໄຈ | ,, | ມີ ໑ ວາຣະ |
| | ປຸເຣຊາຕະປັດໄຈ | ,, | ມີ ໑ ວາຣະ |
| | ອາເສວະນະປັດໄຈ | ,, | ມີ ໑ ວາຣະ |
| | ກຳມະປັດໄຈ | ,, | ມີ ໓ ວາຣະ ຯລຯ |
| | ຊານະປັດໄຈ | ,, | ມີ ໓ ວາຣະ |
| | ມັກຄະປັດໄຈ | ,, | ມີ ໑ ວາຣະ |
| | ສຳປະຍຸດຕະປັດໄຈ | ,, | ມີ ໑ ວາຣະ |
| | ວິບປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| | ອັດຖິປັດໄຈ | ,, | ມີ ໓ ວາຣະ |
| | ນັດຖິປັດໄຈ | ,, | ມີ ໑ ວາຣະ |
| | ວິຄະຕະປັດໄຈ | ,, | ມີ ໑ ວາຣະ |
| | ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ |

**ປັດຈະນີຍານຸໂລມ ຈົບ**

(ສະຫະຊາຕະວານເໝືອນກັບປະຕິດຈະວານ)

# ໗. ສະນິທັດສະນະທຸກະ ໖. ປັດຈະຍະວານ

## ໑. ປັດຈະຍານຸໂລມ

### ເຫຕຸປັດໄຈ

[໔໖] ສະພາວະທຳທີ່ເຫັນບໍ່ໄດ້ເຮັດສະພາວະທຳທີ່ເຫັນບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ອາໄສຂັນ ໑ ທີ່ເຫັນບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ເຮັດຂັນ ໔ ຯລຯ ໃນປະຕິສົນທິຂະນະ ຯລຯ ຫະໄທວັດຖຸ ເຮັດຂັນໃຫ້ເປັນປັດໄຈເກີດຂຶ້ນ ຂັນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ເຮັດມະຫາພູຕະຮູບ ໑ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນບໍ່ໄດ້ເຮັດມະຫາພູຕະຮູບໃຫ້ເປັນປັດໄຈເກີດຂຶ້ນ ຂັນທີ່ເຫັນບໍ່ໄດ້ເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (ເພິ່ງເພີ່ມ ໔ ວາຣະ ແມ່ນນອກນີ້)

### ອາຣຳມະນະປັດໄຈ

[໔໗] ສະພາວະທຳທີ່ເຫັນບໍ່ໄດ້ເຮັດສະພາວະທຳທີ່ເຫັນບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຯລຯ ເຮັດຂັນ ໑ ທີ່ເຫັນບໍ່ໄດ້ ຯລຯ ເຮັດຂັນ ໔ ຯລຯ ໃນປະຕິສົນທິຂະນະ ຯລຯ ຂັນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ຈັກຂຸວິນຍານເຮັດຈັກຂາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ກາຍວິນຍານເຮັດກາຍາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ຂັນທີ່ເຫັນບໍ່ໄດ້ເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (ຫຍໍ້)

| | | | |
|---|---|---|---|
| [໔໘] ເຫຕຸປັດໄຈ | ມີ | ໓ | ວາຣະ |
| ອາຣຳມະນະປັດໄຈ | ມີ | ໑ | ວາຣະ |
| ອະທິປະຕິປັດໄຈ | ມີ | ໓ | ວາຣະ ຯລຯ |
| ອະວິຄະຕະປັດໄຈ | ມີ | ໓ | ວາຣະ |

**ອະນຸໂລມ ຈົບ**

## ໒. ປັດຈະຍະປັດຈະນີຍະ

### ນະເຫຕຸປັດໄຈ

[໔໙] ສະພາວະທຳທີ່ເຫັນບໍ່ໄດ້ເຮັດສະພາວະທຳທີ່ເຫັນບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ເຮັດຂັນ ໑ ທີ່ບໍ່ມີເຫດ

ເຊິ່ງເຫັນບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນ ໆລໆ ເຮັດຂັນ ໔ ໆລໆ ໃນປະຕິສົນທິຂະນະທີ່ເປັນອະເຫຕຸກະ ໆລໆ (ເພິ່ງເພີ່ມຂໍ້ຄວາມຈົນເຖິງອະສັນຍະສັດຕະພົມ) ຈັກຂຸວິນຍານເຮັດຈັກຂາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ໆລໆ ກາຍວິນຍານເຮັດກາຍາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ຂັນທີ່ບໍ່ມີເຫດເຊິ່ງເຫັນບໍ່ໄດ້ເຮັດຫະໄທວັດທຸໃຫ້ເປັນປັດໄຈເກີດຂຶ້ນ ໂມຫະທີ່ປະກອບດ້ວຍວິຈິກິດສາແລະທີ່ປະກອບດ້ວຍອຸດທັດຈະເຮັດຂັນທີ່ປະກອບດ້ວຍວິຈິກິດສາທີ່ປະກອບດ້ວຍອຸດທັດຈະແລະເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (ເພິ່ງເພີ່ມ ໔ ວາຣະນອກນີ້ ຫຍໍ້)

| | | |
|---|---|---|
| [໓໐] ນະເຫຕຸປັດໄຈ | ມີ | ໓ ວາຣະ |
| ນະອາຣຳມະນະປັດໄຈ | ມີ | ໓ ວາຣະ ໆລໆ |
| ໂນວິຄະຕະປັດໄຈ | ມີ | ໓ ວາຣະ |

**ປັດຈະນີຍະ ຈົບ**

## ໓. ປັດຈະຍານຸໂລມປັດຈະນີຍະ

| | | | |
|---|---|---|---|
| [໓໑] ນະອາຣຳມະນະປັດໄຈ | ກັບເຫຕຸປັດໄຈ | ມີ | ໓ ວາຣະ ໆລໆ |
| ນະກຳມະປັດໄຈ | ,, | ມີ | ໑ ວາຣະ ໆລໆ |
| ນະວິບປະຍຸດຕະປັດໄຈ | ,, | ມີ | ໑ ວາຣະ |
| ໂນນັດຖິປັດໄຈ | ,, | ມີ | ໓ ວາຣະ |
| ໂນວິຄະຕະປັດໄຈ | ,, | ມີ | ໓ ວາຣະ |

**ອະນຸໂລມປັດຈະນີຍະ ຈົບ**

## ໔. ປັດຈະຍະປັດຈະນີຍານຸໂລມ

| | | |
|---|---|---|
| [໓໔] ອາຣຳມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໑ ວາຣະ ໆລໆ |
| ມັກຄະປັດໄຈ | ,, | ມີ ໑ ວາຣະ ໆລໆ |
| ອະວິຄະຕະປັດໄຈ | ,, | ມີ ໓ ວາຣະ |

**ປັດຈະນີຍານຸໂລມ ຈົບ**

(ເພິ່ງເພີ່ມນິດສະຍະວາຣະແນວນີ້)

## ໗. ສະນິທັດສະນະທຸກະ ໕. ສັງສັດຖະວາຣະ

## ໑. ປັດຈະຍານຸໂລມ

[໓໓] ສະພາວະທຳທີ່ເຫັນບໍ່ໄດ້ເກີດຜະສົມກັບສະພາວະທຳທີ່ເຫັນບໍ່ໄດ້ຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ເກີດຜະສົມກັບຂັນ ໑ ທີ່ເຫັນບໍ່ໄດ້ ຯລຯ ເກີດຜະສົມກັບຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ

ສະພາວະທຳທີ່ເຫັນບໍ່ໄດ້ເກີດຜະສົມກັບສະພາວະທຳທີ່ເຫັນບໍ່ໄດ້ຍ້ອນອາຣຳມະນະປັດໄຈ (ເພິ່ງເພີ່ມບົດທັງໝົດກັບການນັບສະພາວະທຳທີ່ມີປັດໄຈປຸງແຕ່ງແນວນີ້)

(ສຳປະຍຸດຕະວານເໝືອນກັບສັງສັດຖະວານ)

## ໗. ສະນິທັດສະນະທຸກະ ໗. ປັນຫາວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໓໔] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ໂດຍ ເຫຕຸປັດໄຈ ໃນປະຕິສົນທິຂະນະ ຯລຯ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ເຫັນໄດ້ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ເຫັນໄດ້ໂດຍເຫຕຸປັດໄຈ ໃນປະຕິສົນທິຂະນະ ຯລຯ (໒)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ ແລະທີ່ເຫັນບໍ່ໄດ້ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບທີ່ເຫັນໄດ້ ແລະທີ່ເຫັນບໍ່ໄດ້ໂດຍເຫຕຸປັດໄຈ ໃນປະຕິສົນທິຂະນະ ຯລຯ (໓)

### ອາຣຳມະນະປັດໄຈ

[໓໕] ສະພາວະທຳທີ່ເຫັນໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນເຫັນແຈ້ງຮູບທີ່ເຫັນໄດ້ໂດຍເປັນສະພາວະບໍ່ທ່ຽງ ຯລຯ ໂທມະນັດຈຶ່ງ

ເກີດຂຶ້ນ ບຸກຄົນເຫັນຮູບດ້ວຍທິບພະຈັກຂຸ ຣູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍ ອາຣຳມະນະປັດໄຈ ຂັນທີ່ເຫັນໄດ້ເປັນປັດໄຈແກ່ອິດທິວິທະຍານ ປຸບເພນິວາສານຸດສະຕິຍານ ອະນາຄະຕັງສະຍານແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວພິຈາລະນາກຸສົນນັ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ອອກຈາກຊານແລ້ວພິຈາລະນາຊານ ພຣະອະຣິຍະ ອອກຈາກມັກແລ້ວພິຈາລະນາມັກ ພິຈາລະນາຜົນ ພິຈາລະນານິບພານ ນິບພານເປັນປັດໄຈແກ່ໂຄຕະຣະພູ ໂວທານ ມັກ ຜົນ ແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ ພຣະອະຣິຍະພິຈາລະນາ ກິເລດທີ່ລະໄດ້ແລ້ວ ພິຈາລະນາກິເລດທີ່ຂົ່ມໄດ້ແລ້ວ ຮູ້ກິເລດທີ່ເຄີຍເກີດຂຶ້ນ ບຸກຄົນເຫັນແຈ້ງຈັກຂຸ ຯລຯ ກາຍ ຯລຯ ສຽງ ຯລຯ ຫະໄທວັດຖຸແລະຂັນທີ່ເຫັນບໍ່ໄດ້ໂດຍເປັນສະພາວະບໍ່ທ່ຽງ ຯລຯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນຟັງສຽງດ້ວຍທິບພະໂສຕະທາດ ຮູ້ຈິດຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍຈິດທີ່ເຫັນບໍ່ໄດ້ດ້ວຍເຈໂຕປະຣິຍະຍານ ອາກາສານັນຈາຍະຕະນະເປັນປັດໄຈແກ່ວິນຍານັນຈາຍະຕະນະ ຯລຯ ອາກິນຈັນຍາຍະຕະນະເປັນປັດໄຈແກ່ເນວະສັນຍານາສັນຍາຍະຕະນະ ຯລຯ ສັດທາຍະຕະນະເປັນປັດໄຈແກ່ໂສຕະວິນຍານ ຯລຯ ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍວິນຍານ ຯລຯ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ອິດທິວິທະຍານ ເຈໂຕປະຣິຍະຍານ ປຸບເພນິວາສານຸດສະຕິຍານ ຍະຖາກຳມູປະຄະຍານ ອະນາຄະຕັງສະຍານ ແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ (໑)

## ອະທິປະຕິປັດໄຈ

[໓໖] ສະພາວະທຳທີ່ເຫັນໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນຍິນດີເພີດເພີນຮູບທີ່ເຫັນໄດ້ໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຮູບນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິແລະສະຫະຊາຕາທິປະຕິ

ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວພິຈາລະນາ ກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກ ຈາກຊານ ຯລຯ ພຣະອະຣິຍະອອກຈາກມັກແລ້ວພິຈາລະນາມັກໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາຜົນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນານິບພານໃຫ້ເປັນອາລົມ

ຢ່າງໜັກແໜ້ນ ນິບພານເປັນປັດໄຈແກ່ໂຄຕະຣະພູ ໂວທານ ມັກ ແລະຜົນໂດຍອະທິປະຕິປັດໄຈ ບຸກຄົນຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸແລະຂັນທີ່ເຫັນບໍ່ໄດ້ໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ໂດຍອະທິປະຕິປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ເຫັນໄດ້ໂດຍອະທິປະຕິປັດໄຈ (໘)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ເຫັນບໍ່ໄດ້ເປັນປັດໄຈ ແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບທີ່ເຫັນໄດ້ ແລະທີ່ເຫັນບໍ່ໄດ້ໂດຍອະທິປະຕິປັດໄຈ (໓)

## ອະນັນຕະຣະປັດໄຈ

[໓໗] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເຫັນບໍ່ໄດ້ເຊິ່ງເກີດຫຼັງ ໆ ໂດຍ ອະນັນຕະຣະປັດໄຈ ອະນຸໂລມເປັນປັດໄຈແກ່ໂຄຕະຣະພູ ຯລຯ ໂຄຕະຣະພູເປັນປັດໄຈແກ່ມັກ ຯລຯ ເນວະສັນຍານາສັນຍາຍະຕະນະເປັນປັດໄຈແກ່ຜົນສະມາບັດໂດຍອະນັນຕະຣະປັດໄຈ (໑)

## ສະມະນັນຕະຣະປັດໄຈເປັນຕົ້ນ

[໓໘] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍສະມະນັນຕະຣະປັດໄຈ ເປັນປັດໄຈໂດຍສະຫະຊາຕະປັດໄຈ ມີ ໓ ວາຣະ ເປັນປັດໄຈໂດຍອັນຍະມັນຍະປັດໄຈ ມີ ໑ ວາຣະ ເປັນປັດໄຈໂດຍນິດສະຍະປັດໄຈ ມີ ໓ ວາຣະ

## ອຸປະນິດສະຍະປັດໄຈ

[໓໙] ສະພາວະທຳທີ່ເຫັນໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນູປະນິດສະຍະແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນເມື່ອປາດຖະໜາວັນນະສົມບັດຈຶ່ງໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ວັນນະສົມບັດເປັນປັດໄຈແກ່ສັດທາ ฯລฯ ຄວາມປາຖະໜາ ສຸກທາງກາຍ ທຸກທາງກາຍ ມັກ ແລະຜົນສະມາບັດໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ฯລฯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວໃຫ້ທານ ฯລฯ ເຮັດສະມາບັດໃຫ້ເກີດຂຶ້ນ ມີມານະ ຖືທິດຖິ ฯລฯ ອາໄສສິນ ฯລฯ ເສນາສະນະແລ້ວໃຫ້ທານ ฯລฯ ທຳລາຍສົງ ສັດທາ ฯລฯ ເສນາສະນະເປັນປັດໄຈແກ່ສັດທາ ฯລฯ ຜົນສະມາບັດໂດຍອຸປະນິດສະຍະປັດໄຈ (໑)

## ປຸເຣຊາຕະປັດໄຈ

[໔໐] ສະພາວະທຳທີ່ເຫັນໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍປຸເຣຊາຕະປັດໄຈ ໄດ້ແກ່ ບຸກຄົນເຫັນແຈ້ງຮູບທີ່ເຫັນໄດ້ໂດຍເປັນສະພາວະບໍ່ທ່ຽງ ฯລฯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນ ເຫັນຮູບດ້ວຍທິບພະຈັກຂຸ ຣູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣຳມະນະປຸເຣຊາຕະ ໄດ້ແກ່ ບຸກຄົນເຫັນແຈ້ງຈັກຂຸ ฯລฯ ຫະໄທວັດຖຸໂດຍເປັນສະພາວະ ບໍ່ທ່ຽງ ฯລฯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນຟັງສຽງດ້ວຍທິບພະໂສຕະທາດ ສັດທາຍະຕະນະເປັນປັດໄຈແກ່ໂສຕະວິນຍານ ฯລฯ ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍວິນຍານໂດຍປຸເຣຊາຕະປັດໄຈ

ວັດຖຸປຸເຣຊາຕະ ໄດ້ແກ່ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ฯລฯ ກາຍາຍະຕະນະເປັນປັດໄຈແກ່ກາຍວິນຍານ ฯລฯ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເຫັນບໍ່ໄດ້ໂດຍປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ວັດຖຸປຸເຣຊາຕະ ໄດ້ແກ່ ຣູປາຍະຕະນະແລະຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເຫັນບໍ່ໄດ້ໂດຍປຸເຣຊາຕະປັດໄຈ ຣູປາຍະຕະນະແລະຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍປຸເຣຊາຕະປັດໄຈ (໑)

## ປັດສາຊາຕະປັດໄຈ

[໔໑] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍປັດສາຊາຕະປັດໄຈ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນບໍ່ໄດ້ໂດຍປັດສາຊາຕະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ໂດຍປັດສາຊາຕະປັດໄຈ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນໄດ້ໂດຍປັດສາຊາຕະປັດໄຈ (໒)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ໂດຍປັດສາຊາຕະປັດໄຈ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນໄດ້ແລະເຫັນບໍ່ໄດ້ໂດຍປັດສາຊາຕະປັດໄຈ (໓)

## ອາເສວະນະປັດໄຈ

[໔໒] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອາເສວະນະປັດໄຈ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ເຫັນບໍ່ໄດ້ເຊິ່ງເກີດຫຼັງ ໆ ຯລຯ ອະນຸໂລມເປັນປັດໄຈແກ່ໂຄຕະຣະພູ ອະນຸໂລມເປັນປັດໄຈແກ່ໂວທານ ໂຄຕະຣະພູເປັນປັດໄຈແກ່ມັກ ໂວທານເປັນປັດໄຈແກ່ມັກໂດຍອາເສວະນະປັດໄຈ (໑)

## ກຳມະປັດໄຈ

[໔໓] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍກຳມະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ໂດຍກຳມະປັດໄຈ ໃນປະຕິສົນທິຂະນະ ຯລຯ

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຂັນທີ່ເປັນວິບາກ ແລະກະຕັດຕະຮູບທີ່ເຫັນບໍ່ໄດ້ໂດຍກຳມະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ໂດຍກຳມະປັດໄຈມີ ໒ ຢ່າງ ຄືສະຫະຊາຕະແລະນານາຂະນິກະ (ເພິ່ງຂະຫຍາຍໃຫ້ພິສະດານ) (໒)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ໂດຍກຳມະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ (ເພິ່ງຂະຫຍາຍໃຫ້ພິສະດານ) (໓)

## ວິປາກະປັດໄຈເປັນຕົ້ນ

[໘໘] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍວິປາກະປັດໄຈ ມີ ໑ ວາຣະ ເປັນປັດໄຈໂດຍອາຫາຣະປັດໄຈ ມີ ໑ ວາຣະ (ເພິ່ງເພີ່ມກະວະລິງກາຣາຫານທັງ ໑ ວາຣະ) ເປັນປັດໄຈໂດຍອິນທະຣິຍະປັດໄຈ ມີ ໑ ວາຣະ (ເພິ່ງເພີ່ມຮູບຊີວິຕິນຊີທັງ ໑ ວາຣະ) ເປັນປັດໄຈໂດຍຊານະປັດໄຈ ມີ ໑ ວາຣະ ເປັນປັດໄຈໂດຍມັກຄະປັດໄຈມີ ໑ ວາຣະ ເປັນປັດໄຈໂດຍສຳປະຍຸດຕະປັດໄຈ ມີ ໑ ວາຣະ

## ວິບປະຍຸດຕະປັດໄຈ

[໘໕] ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ ມີ ໑ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ກະຕັດຕະຮູບທີ່ເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ ຂັນເປັນປັດໄຈແກ່ຫະໄທວັດຖຸໂດຍວິບປະຍຸດຕະປັດໄຈ ຫະໄທວັດຖຸເປັນປັດໄຈແກ່ຂັນໂດຍວິບປະຍຸດຕະປັດໄຈ

ປຸເຣຊາຕະ ໄດ້ແກ່ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ກາຍາຍະຕະນະເປັນປັດໄຈແກ່ກາຍວິນຍານ ຯລຯ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ໂດຍວິບປະຍຸດຕະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ເຫັນໄດ້ໂດຍວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ຯລຯ

ປັດສາຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນໄດ້ໂດຍວິບປະຍຸດຕະປັດໄຈ (໒)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ຯລຯ

ປັດສາຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນໄດ້ແລະເຫັນບໍ່ໄດ້ໂດຍວິບປະຍຸດຕະປັດໄຈ (໓)

## ອັດຖິປັດໄຈເປັນຕົ້ນ

[໔໙] ສະພາວະທຳທີ່ເຫັນໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ໄດ້ແກ່ ບຸກຄົນເຫັນແຈ້ງຮູບທີ່ເຫັນໄດ້ໂດຍເປັນສະພາວະບໍ່ທ່ຽງ ຯລຯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນເຫັນຮູບດ້ວຍທິບພະຈັກຂຸ ຮູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍອັດຖິປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ມີ ໕ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ຯລຯ ອາໄສຂັນ ໔ ຯລຯ (ຫຍໍ້ ເພິ່ງເພີ່ມຂໍ້ຄວາມຈົນເຖິງອະສັນຍະສັດຕະພົມ)

ປຸເຣຊາຕະ ໄດ້ແກ່ ບຸກຄົນເຫັນແຈ້ງຈັກຂຸ ຯລຯ ຫະໄທວັດຖຸໂດຍເປັນສະພາວະບໍ່ທ່ຽງ ຯລຯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນຟັງສຽງດ້ວຍທິບພະໂສຕະທາດ ສັດທາຍະຕະນະເປັນປັດໄຈແກ່ ໂສຕະວິນຍານ ຯລຯ ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍວິນຍານ ຯລຯ ຈັກຂາຍະຕະນະ ເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ກາຍາຍະຕະນະເປັນປັດໄຈແກ່ກາຍວິນຍານ ຯລຯ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນບໍ່ໄດ້ໂດຍອັດຖິປັດໄຈ

ກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕະຮູບທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ເຫັນໄດ້ໂດຍອັດຖິປັດໄຈ ໃນປະຕິສົນທິຂະນະ ຯລຯ ມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານຮູບ ແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນໄດ້ໂດຍອັດຖິປັດໄຈ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີ ອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຮູບເປັນປັດໄຈແກ່ກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງເຫັນໄດ້ໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ເຫັນບໍ່ໄດ້ເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງເຫັນໄດ້ໂດຍອັດຖິປັດໄຈ ກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ທີ່ເຫັນໄດ້ໂດຍອັດຖິປັດໄຈ ຣູບຊີວິຕິນຊີເປັນປັດໄຈແກ່ກະຕັດຕະຣູບທີ່ເຫັນໄດ້ໂດຍອັດຖິປັດໄຈ (໘)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ເຫັນບໍ່ໄດ້ເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຣູບທີ່ເຫັນໄດ້ ແລະທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ฯລฯ ຂັນ ໒ ฯລฯ ໃນປະຕິສົນທິຂະນະ ฯລฯ ມະຫາພູຕະຣູບເປັນປັດໄຈແກ່ຈິດຕະສະມຸດຖານຣູບແລະກະຕັດຕະຣູບທີ່ເປັນອຸປາທາຍະຣູບເຊິ່ງເຫັນໄດ້ແລະເຫັນບໍ່ໄດ້ໂດຍອັດຖິປັດໄຈ ฯລฯ ທີ່ເປັນພາຍນອກ ฯລฯ ທີ່ມີອາຫານເປັນສະມຸດຖານ ฯລฯ ທີ່ມີອຸຕຸເປັນສະມຸດຖານ ฯລฯ ສຳລັບເຫຼົ່າອະສັນຍະສັດຕະພົມ ມະຫາພູຕະຣູບເປັນປັດໄຈແກ່ກະຕັດຕະຣູບທີ່ເປັນອຸປາທາຍະຣູບເຊິ່ງເຫັນໄດ້ແລະເຫັນບໍ່ໄດ້ໂດຍອັດຖິປັດໄຈ (໓)

[໔໗] ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຣູປາຍະຕະນະແລະຫະໄທວັດຖຸເປັນປັດໄຈແກ່ຂັນທີ່ເຫັນບໍ່ໄດ້ໂດຍອັດຖິປັດໄຈ ຣູປາຍະຕະນະແລະຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານໂດຍອັດຖິປັດໄຈ ເປັນປັດໄຈໂດຍນັດຖິປັດໄຈ ເປັນປັດໄຈໂດຍວິຄະຕະປັດໄຈ ເປັນປັດໄຈໂດຍອະວິຄະຕະປັດໄຈ

### ໑. ປັດຈະຍານຸໂລມ ໒. ສັງຂະຍາວານ

## ສຸດທະໄນ

| | | | |
|---|---|---|---|
| [໔໘] | ເຫຕຸປັດໄຈ | ມີ | ໓ ວາຣະ |
| | ອາຣົມມະນະປັດໄຈ | ມີ | ໒ ວາຣະ |
| | ອະທິປະຕິປັດໄຈ | ມີ | ໔ ວາຣະ |
| | ອະນັນຕະຣະປັດໄຈ | ມີ | ໑ ວາຣະ |
| | ສະມະນັນຕະຣະປັດໄຈ | ມີ | ໑ ວາຣະ |
| | ສະຫະຊາຕະປັດໄຈ | ມີ | ໓ ວາຣະ |
| | ອັນຍະມັນຍະປັດໄຈ | ມີ | ໑ ວາຣະ |
| | ນິດສະຍະປັດໄຈ | ມີ | ໓ ວາຣະ |
| | ອຸປະນິດສະຍະປັດໄຈ | ມີ | ໒ ວາຣະ |

| | | |
|---|---|---|
| ປຸເຣຊາຕະປັດໄຈ | ມີ | ໓ ວາຣະ |
| ປັດສາຊາຕະປັດໄຈ | ມີ | ໓ ວາຣະ |
| ອາເສວະນະປັດໄຈ | ມີ | ໑ ວາຣະ |
| ກຳມະປັດໄຈ | ມີ | ໓ ວາຣະ |
| ວິປາກະປັດໄຈ | ມີ | ໓ ວາຣະ |
| ອາຫາຣະປັດໄຈ | ມີ | ໓ ວາຣະ |
| ອິນທະຣິຍະປັດໄຈ | ມີ | ໓ ວາຣະ |
| ຊານະປັດໄຈ | ມີ | ໓ ວາຣະ |
| ມັກຄະປັດໄຈ | ມີ | ໓ ວາຣະ |
| ສຳປະຍຸດຕະປັດໄຈ | ມີ | ໑ ວາຣະ |
| ວິບປະຍຸດຕະປັດໄຈ | ມີ | ໓ ວາຣະ |
| ອັດຖິປັດໄຈ | ມີ | ໕ ວາຣະ |
| ນັດຖິປັດໄຈ | ມີ | ໑ ວາຣະ |
| ວິຄະຕະປັດໄຈ | ມີ | ໑ ວາຣະ |
| ອະວິຄະຕະປັດໄຈ | ມີ | ໕ ວາຣະ (ເພິ່ງນັບແບວນີ້) |

**ອະນຸໂລມ ຈົບ**

## ໔. ປັດຈະນີຍຸດທາຣະ

[໔໙] ສະພາວະທຳທີ່ເຫັນໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອາຣຳມະນະປັດໄຈ ແລະອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ປຸເຣຊາຕະປັດໄຈ ປັດສາຊາຕະປັດໄຈ ກຳມະປັດໄຈ ອາຫາຣະປັດໄຈ ແລະອິນທະຣິຍະປັດໄຈ (໑)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ໂດຍສະຫະຊາຕະປັດໄຈ ປັດສາຊາຕະປັດໄຈ ກຳມະປັດໄຈ ອາຫາຣະປັດໄຈ ແລະອິນທະຣິຍະປັດໄຈ (໒)

ສະພາວະທຳທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນໄດ້ ແລະທີ່ເຫັນບໍ່ໄດ້ໂດຍສະຫະຊາຕະປັດໄຈ ປັດສາຊາຕະປັດໄຈ ກຳມະປັດໄຈ ອາຫາຣະປັດໄຈ ແລະອິນທະຣິຍະປັດໄຈ (໓)

ສະພາວະທຳທີ່ເຫັນໄດ້ແລະທີ່ເຫັນບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ເຫັນບໍ່ໄດ້ໂດຍປຸເຣຊາຕະປັດໄຈ (໑)

# ໘. ປັດຈະຍະປັດຈະນີຍະ ໘. ສັງຂະຍາວານ

## ສຸດທະໄນ

| | | | |
|---|---|---|---|
| [໕໐] ນະເຫຕຸປັດໄຈ | ມີ | ໕ | ວາຣະ |
| ນະອາຣໍາມະນະປັດໄຈ | ມີ | ໔ | ວາຣະ |
| ນະອະທິປະຕິປັດໄຈ | ມີ | ໕ | ວາຣະ |
| ນະອະນັນຕະຣະປັດໄຈ | ມີ | ໕ | ວາຣະ |
| ນະສະມະນັນຕະຣະປັດໄຈ | ມີ | ໕ | ວາຣະ |
| ນະສະຫະຊາຕະປັດໄຈ | ມີ | ໕ | ວາຣະ |
| ນະອັນຍະມັນຍະປັດໄຈ | ມີ | ໕ | ວາຣະ |
| ນະນິດສະຍະປັດໄຈ | ມີ | ໔ | ວາຣະ |
| ນະອຸປະນິດສະຍະປັດໄຈ | ມີ | ໕ | ວາຣະ |
| ນະປຸເຣຊາຕະປັດໄຈ | ມີ | ໔ | ວາຣະ |
| ນະປັດສາຊາຕະປັດໄຈ | ມີ | ໕ | ວາຣະ |

(ທຸກປັດໄຈ ມີປັດໄຈລະ ໕ ວາຣະ)

| | | | |
|---|---|---|---|
| ນະສໍາປະຍຸດຕະປັດໄຈ | ມີ | ໕ | ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ | ໔ | ວາຣະ |
| ໂນອັດຖິປັດໄຈ | ມີ | ໔ | ວາຣະ |
| ໂນນັດຖິປັດໄຈ | ມີ | ໕ | ວາຣະ |
| ໂນວິຄະຕະປັດໄຈ | ມີ | ໕ | ວາຣະ |
| ໂນອະວິຄະຕະປັດໄຈ | ມີ | ໔ | ວາຣະ |

**ປັດຈະນີຍະ ຈົບ**

# ໓. ປັດຈະຍານຸໂລມປັດຈະນີຍະ

## ເຫຕຸທຸກະໄນ

| | | | | |
|---|---|---|---|---|
| [໕໑] ນະອາຣໍາມະນະປັດໄຈ | ກັບເຫຕຸປັດໄຈ | ມີ | ໓ | ວາຣະ |
| ນະອະທິປະຕິປັດໄຈ | ,, | ມີ | ໓ | ວາຣະ |
| ນະອະນັນຕະຣະປັດຈະຍະ | ,, | ມີ | ໓ | ວາຣະ |
| ນະສະມະນັນຕະຣະປັດໄຈ | ,, | ມີ | ໓ | ວາຣະ |
| ນະອັນຍະມັນຍະປັດໄຈ | ,, | ມີ | ໓ | ວາຣະ |

| | | | | |
|---|---|---|---|---|
| ນະອຸປະນິດສະຍະປັດໄຈ | ,, | ມີ | ໓ | ວາຣະ ຯລຯ |
| ນະສຳປະຍຸດຕະປັດໄຈ | ,, | ມີ | ໓ | ວາຣະ |
| ນະວິບປະຍຸດຕະປັດໄຈ | ,, | ມີ | ໑ | ວາຣະ |
| ໂນນັດຖິປັດໄຈ | ,, | ມີ | ໓ | ວາຣະ |
| ໂນວິຄະຕະປັດໄຈ | ,, | ມີ | ໓ | ວາຣະ |

**ອະນຸໂລມປັດຈະນີຍະ ຈົບ**

# ໔. ປັດຈະຍະປັດຈະນີຍານຸໂລມ

## ນະເຫຕຸທຸກະໄນ

| | | | | |
|---|---|---|---|---|
| [໕໔] ອາຣຳມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ | ໔ | ວາຣະ |
| ອະທິປະຕີປັດໄຈ | ,, | ມີ | ໔ | ວາຣະ |
| ອະນັນຕະຣະປັດໄຈ | ,, | ມີ | ໑ | ວາຣະ |
| ສະມະນັນຕະຣະປັດໄຈ | ,, | ມີ | ໑ | ວາຣະ |
| ສະຫະຊາຕະປັດໄຈ | ,, | ມີ | ໓ | ວາຣະ |
| ອັນຍະມັນຍະປັດໄຈ | ,, | ມີ | ໑ | ວາຣະ |
| ນິດສະຍະປັດໄຈ | ,, | ມີ | ໓ | ວາຣະ |
| ອຸປະນິດສະຍະປັດໄຈ | ,, | ມີ | ໔ | ວາຣະ |
| ປຸເຣຊາຕະປັດໄຈ | ,, | ມີ | ໓ | ວາຣະ |
| ປັດສາຊາຕະປັດໄຈ | ,, | ມີ | ໓ | ວາຣະ |
| ອາເສວະນະປັດໄຈ | ,, | ມີ | ໑ | ວາຣະ |
| ກຳມະປັດໄຈ | ,, | ມີ | ໓ | ວາຣະ ຯລຯ |
| ມັກຄະປັດໄຈ | ,, | ມີ | ໓ | ວາຣະ |
| ສຳປະຍຸດຕະປັດໄຈ | ,, | ມີ | ໑ | ວາຣະ |
| ວິບປະຍຸດຕະປັດໄຈ | ,, | ມີ | ໓ | ວາຣະ |
| ອັດຖິປັດໄຈ | ,, | ມີ | ໕ | ວາຣະ |
| ນັດຖິປັດໄຈ | ,, | ມີ | ໑ | ວາຣະ |
| ວິຄະຕະປັດໄຈ | ,, | ມີ | ໑ | ວາຣະ |
| ອະວິຄະຕະປັດໄຈ | ,, | ມີ | ໕ | ວາຣະ |

**ປັດຈະນີຍານຸໂລມ ຈົບ ສະນິທັດສະນະທຸກະ ຈົບ**

# ໑໐. ສັບປະຕິຄະທຸກະ ໑. ປະຕິດຈະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໔໓] ສະພາວະທຳທີ່ກະທົບໄດ້ອາໄສສະພາວະທຳທີ່ກະທົບໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ມະຫາພູຕະຮູບ ໔ ອາໄສມະຫາພູຕະຮູບ ໑ ທີ່ກະທົບໄດ້ເກີດຂຶ້ນ ມະຫາພູຕະຮູບ ໑ ອາໄສມະຫາພູຕະຮູບ ໔ ເກີດຂຶ້ນ ຈິດຕະສະມຸດຖານຮູບ ແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງກະທົບໄດ້ອາໄສມະຫາພູຕະຮູບທີ່ກະທົບໄດ້ເກີດຂຶ້ນ ຈັກຂາຍະຕະນະ ຯລຯ ຣະສາຍະຕະນະອາໄສໂຜດຖັບພາຍະຕະນະເກີດຂຶ້ນ (໑)

ສະພາວະທຳທີ່ກະທົບບໍ່ໄດ້ອາໄສສະພາວະທຳທີ່ກະທົບໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ອາໂປທາດອາໄສມະຫາພູຕະຮູບທີ່ກະທົບໄດ້ເກີດຂຶ້ນ ຈິດຕະສະມຸດຖານຮູບແລະກະຕັດຕະຮູບ ທີ່ເປັນອຸປາທາຍະຮູບເຊິ່ງກະທົບບໍ່ໄດ້ອາໄສມະຫາພູຕະຮູບທີ່ກະທົບໄດ້ເກີດຂຶ້ນ ອາໂປທາດ ອິດຖິນຊີ ຯລຯ ກະວະລິງກາຣາຫານອາໄສໂຜດຖັບພາຍະຕະນະເກີດຂຶ້ນ (໒)

ສະພາວະທຳທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ອາໄສສະພາວະທຳທີ່ກະທົບໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ມະຫາພູຕະຮູບ ໔ ແລະອາໂປທາດອາໄສມະຫາພູຕະຮູບ ໑ ທີ່ກະທົບໄດ້ເກີດຂຶ້ນ ຯລຯ ອາໄສມະຫາພູຕະຮູບ ໔ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງກະທົບໄດ້ ແລະກະທົບບໍ່ໄດ້ອາໄສມະຫາພູຕະຮູບທີ່ກະທົບໄດ້ເກີດຂຶ້ນ ຈັກຂາຍະຕະນະ ຯລຯ ຣະສາຍະຕະນະ ອາໂປທາດ ອິດຖິນຊີ ຯລຯ ກະວະລິງກາຣາຫານ ອາໄສໂຜດຖັບພາຍະຕະນະເກີດຂຶ້ນ (໓)

[໔໔] ສະພາວະທຳທີ່ກະທົບບໍ່ໄດ້ອາໄສສະພາວະທຳທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ກະທົບບໍ່ໄດ້ອາໄສຂັນ ໑ ທີ່ກະທົບບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບ ເຊິ່ງກະທົບບໍ່ໄດ້ອາໄສອາໂປທາດເກີດຂຶ້ນ ອິດຖິນຊີ ຯລຯ ກະວະລິງກາຣາຫານ ອາໄສອາໂປທາດເກີດຂຶ້ນ (໑)

ສະພາວະທຳທີ່ກະທົບໄດ້ອາໄສສະພາວະທຳທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບທີ່ກະທົບໄດ້ອາໄສຂັນທີ່ກະທົບບໍ່ໄດ້ເກີດຂຶ້ນ ໃນປະຕິສົນທິຂະນະ ຯລຯ ມະຫາພູຕະຮູບທີ່ກະທົບໄດ້ອາໄສອາໂປທາດເກີດຂຶ້ນ ຈິດຕະສະມຸດຖານຮູບແລະ

ກະຕັດຕະຮູບ ທີ່ເປັນອຸປາທາຍະຮູບເຊິ່ງກະທົບໄດ້ອາໄສອາໂປທາດເກີດຂຶ້ນ ຈັກຂາຍະຕະນະ ຯລຯ ໂຜດຖັບພາຍະຕະນະອາໄສອາໂປທາດເກີດຂຶ້ນ (໘)

ສະພາວະທຳທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ ອາໄສສະພາວະທຳທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ອາໄສຂັນ ໑ ທີ່ກະທົບບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໘ ຯລຯ ໃນປະຕິສົນທິຂະນະ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງກະທົບໄດ້ແລະກະທົບບໍ່ໄດ້ອາໄສອາໂປທາດເກີດຂຶ້ນ ຈັກຂາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ອິດຖິນຊີ ຯລຯ ກະວະລິງກາຣາຫານອາໄສອາໂປທາດເກີດຂຶ້ນ (໓)

[໕໕] ສະພາວະທຳທີ່ກະທົບໄດ້ອາໄສສະພາວະທຳທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບທີ່ກະທົບໄດ້ອາໄສຂັນທີ່ກະທົບບໍ່ໄດ້ແລະອາໄສມະຫາພູຕະຮູບເກີດຂຶ້ນ ໃນປະຕິສົນທິຂະນະ ຯລຯ ມະຫາພູຕະຮູບ ໘ ອາໄສມະຫາພູຕະຮູບ ໑ ທີ່ກະທົບໄດ້ແລະອາໄສອາໂປທາດເກີດຂຶ້ນ ຯລຯ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບ ເຊິ່ງກະທົບໄດ້ອາໄສມະຫາພູຕະຮູບທີ່ກະທົບໄດ້ແລະອາໄສອາໂປທາດເກີດຂຶ້ນ ຈັກຂາຍະຕະນະ ຯລຯ ຣະສາຍະຕະນະອາໄສໂຜດຖັບພາຍະຕະນະແລະອາໂປທາດເກີດຂຶ້ນ (໑)

ສະພາວະທຳທີ່ກະທົບບໍ່ໄດ້ອາໄສສະພາວະທຳທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບທີ່ກະທົບບໍ່ໄດ້ອາໄສຂັນທີ່ກະທົບໄດ້ແລະອາໄສມະຫາພູຕະຮູບເກີດຂຶ້ນ ໃນປະຕິສົນທິຂະນະ ກະຕັດຕະຮູບທີ່ກະທົບບໍ່ໄດ້ອາໄສຂັນທີ່ກະທົບບໍ່ໄດ້ແລະອາໄສມະຫາພູຕະຮູບເກີດຂຶ້ນ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງກະທົບບໍ່ໄດ້ອາໄສໂຜດຖັບພາຍະຕະນະ ແລະອາໂປທາດເກີດຂຶ້ນ ອິດຖິນຊີ ຯລຯ ກະວະລິງກາຣາຫານອາໄສໂຜດຖັບພາຍະຕະນະ ແລະອາໂປທາດເກີດຂຶ້ນ (໘)

ສະພາວະທຳທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ອາໄສສະພາວະທຳທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບທີ່ກະທົບໄດ້ແລະທີ່ກະທົບ ບໍ່ໄດ້ອາໄສຂັນທີ່ກະທົບບໍ່ໄດ້ ແລະອາໄສມະຫາພູຕະຮູບເກີດຂຶ້ນ ໃນປະຕິສົນທິຂະນະ ຯລຯ ກະຕັດຕະຮູບທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ອາໄສຂັນທີ່ກະທົບບໍ່ໄດ້ ແລະອາໄສມະຫາພູຕະຮູບເກີດຂຶ້ນ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງກະທົບໄດ້ແລະກະທົບບໍ່ໄດ້ອາໄສ ໂຜດຖັບພາຍະຕະນະແລະອາໂປທາດເກີດຂຶ້ນ ຈັກຂາຍະຕະນະ ຯລຯ ຣະສາຍະຕະນະ ອິດຖິນຊີ ຯລຯ ກະວະລິງກາຣາຫານອາໄສໂຜດຖັບພາຍະຕະນະແລະອາໂປທາດເກີດຂຶ້ນ (໓)

## ອາຮໍາມະນະປັດໄຈເປັນຕົ້ນ

[໕໖] ສະພາວະທໍາທີ່ກະທົບບໍ່ໄດ້ອາໄສສະພາວະທໍາທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນອາຮໍາມະນະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ກະທົບບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ ຂັນອາໄສຫະໄທວັດຖຸເກີດຂຶ້ນ

## ອະທິປະຕິປັດໄຈເປັນຕົ້ນ

[໕໗] ສະພາວະທໍາທີ່ກະທົບບໍ່ໄດ້ອາໄສສະພາວະທໍາທີ່ກະທົບໄດ້ເກີດຂຶ້ນຍ້ອນອະທິປະຕິປັດໄຈ (ເພິ່ງເວັ້ນປະຕິສົນທິແລະກະຕັດຕະຣູບ) ຍ້ອນອະນັນຕະຣະປັດໄຈ ຯລຯ ຍ້ອນສະມະນັນຕະຣະປັດໄຈ ຯລຯ ຍ້ອນສະຫະຊາຕະປັດໄຈ ຯລຯ (ເພິ່ງເພີ່ມມະຫາພູຕະຣູບທັງໝົດ) ຍ້ອນອັນຍະມັນຍະປັດໄຈ ຯລຯ ມະຫາພູຕະຣູບ ໒ ອາໄສມະຫາພູຕະຣູບ ໑ ທີ່ກະທົບໄດ້ເກີດຂຶ້ນ ຯລຯ ອາໄສມະຫາພູຕະຣູບ ໒ ຯລຯ (໑)

ສະພາວະທໍາທີ່ກະທົບບໍ່ໄດ້ອາໄສສະພາວະທໍາທີ່ກະທົບໄດ້ເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ອາໂປທາດ ຯລຯ ອາໄສມະຫາພູຕະຣູບທີ່ກະທົບໄດ້ເກີດຂຶ້ນ (໒)

ສະພາວະທໍາທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ ອາໄສສະພາວະທໍາທີ່ກະທົບໄດ້ເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ມະຫາພູຕະຣູບ ໒ ແລະອາໂປທາດອາໄສມະຫາພູຕະຣູບ ໑ ທີ່ກະທົບໄດ້ເກີດຂຶ້ນ ຯລຯ ອາໄສມະຫາພູຕະຣູບ ໒ ຯລຯ (໓)

[໕໘] ສະພາວະທໍາທີ່ກະທົບບໍ່ໄດ້ອາໄສສະພາວະທໍາທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ກະທົບບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ (໑)

ສະພາວະທໍາທີ່ກະທົບໄດ້ອາໄສສະພາວະທໍາທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ມະຫາພູຕະຣູບທີ່ກະທົບໄດ້ອາໄສອາໂປທາດເກີດຂຶ້ນ (ເພິ່ງເພີ່ມມະຫາພູຕະຣູບທີ່ເປັນພາຍໃນແລະພາຍນອກເຫຼົ່ານີ້ເຂົ້າດ້ວຍ) (໒)

ສະພາວະທໍາທີ່ກະທົບໄດ້ອາໄສສະພາວະທໍາທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນອັນຍະມັນຍະປັດໄຈ ໄດ້ແກ່ ມະຫາພູຕະຣູບ ໒ ອາໄສມະຫາພູຕະຣູບ ໑ ທີ່ກະທົບໄດ້ແລະອາໄສອາໂປທາດເກີດຂຶ້ນ ຯລຯ ຍ້ອນນິດສະຍະປັດໄຈ ຯລຯ ຍ້ອນອະວິຄະຕະປັດໄຈ

# ໑. ປັດຈະຍານຸໂລມ ໘. ສັງຂະຍາວານ

## ສຸດທະໄນ

| | | | |
|---|---|---|---|
| [໕໙] ເຫຕຸປັດໄຈ | ມີ | ໙ | ວາຣະ |
| ອາຣຳມະນະປັດໄຈ | ມີ | ໑ | ວາຣະ |
| ອະທິປະຕິປັດໄຈ | ມີ | ໙ | ວາຣະ |
| ອະນັນຕະຣະປັດໄຈ | ມີ | ໑ | ວາຣະ |
| ສະມະນັນຕະຣະປັດໄຈ | ມີ | ໑ | ວາຣະ |
| ສະຫະຊາຕະປັດໄຈ | ມີ | ໙ | ວາຣະ |
| ອັນຍະມັນຍະປັດໄຈ | ມີ | ໖ | ວາຣະ |
| ນິດສະຍະປັດໄຈ | ມີ | ໙ | ວາຣະ |
| ອຸປະນິດສະຍະປັດໄຈ | ມີ | ໑ | ວາຣະ |
| ປຸເຣຊາຕະປັດໄຈ | ມີ | ໑ | ວາຣະ |
| ອາເສວະນະປັດໄຈ | ມີ | ໑ | ວາຣະ |
| ກຳມະປັດໄຈ | ມີ | ໙ | ວາຣະ |
| ວິປາກະປັດໄຈ | ມີ | ໙ | ວາຣະ |
| ອາຫາຣະປັດໄຈ | ມີ | ໙ | ວາຣະ |
| ອິນທະຣິຍະປັດໄຈ | ມີ | ໙ | ວາຣະ |
| ຊານະປັດໄຈ | ມີ | ໙ | ວາຣະ |
| ມັກຄະປັດໄຈ | ມີ | ໙ | ວາຣະ |
| ສຳປະຍຸດຕະປັດໄຈ | ມີ | ໑ | ວາຣະ |
| ວິບປະຍຸດຕະປັດໄຈ | ມີ | ໙ | ວາຣະ |
| ອັດຖິປັດໄຈ | ມີ | ໙ | ວາຣະ |
| ນັດຖິປັດໄຈ | ມີ | ໑ | ວາຣະ |
| ວິຄະຕະປັດໄຈ | ມີ | ໑ | ວາຣະ |
| ອະວິຄະຕະປັດໄຈ | ມີ | ໙ | ວາຣະ |

**ອະນຸໂລມ ຈົບ**

# ໔. ປັດຈະຍະປັດຈະນີຍະ ໑. ວິພັງຄະວານ

## ນະເຫຕຸປັດໄຈ

[໖໐] ສະພາວະທຳທີ່ກະທົບໄດ້ ອາໄສສະພາວະທຳທີ່ກະທົບໄດ້ເກີດຂຶ້ນຍ້ອນເຫຕຸປັດໄຈ ມີ ໖ ວາຣະ

ສະພາວະທຳທີ່ກະທົບບໍ່ໄດ້ອາໄສສະພາວະທຳທີ່ກະທົບບໍ່ໄດ້ເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ຂັນ ໖ ແລະຈິດຕະສະມຸດຖານຮູບທີ່ກະທົບບໍ່ໄດ້ອາໄສຂັນ ໑ ທີ່ເປັນອະເຫຕຸກະເຊິ່ງກະທົບບໍ່ໄດ້ເກີດຂຶ້ນ ຯລຯ ອາໄສຂັນ ໔ ຯລຯ ໃນປະຕິສົນທິຂະນະທີ່ເປັນອະເຫຕຸກະ ຯລຯ ຫະໄທວັດຖຸອາໄສຂັນເກີດຂຶ້ນ ຂັນອາໄສຫະໄທວັດຖຸເກີດຂຶ້ນ ຈິດຕະສະມຸດຖານຮູບແລະກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງກະທົບບໍ່ໄດ້ ອາໄສອາໂປທາດເກີດຂຶ້ນ ອິດຖິນຊີ ຯລຯ ກະວະລິງກາຣາຫານອາໄສອາໂປທາດເກີດຂຶ້ນ ຯລຯ ທີ່ເປັນພາຍນອກ ຯລຯ ທີ່ມີອາຫານເປັນສະມຸດຖານ ຯລຯ ທີ່ມີອຸຕຸເປັນສະມຸດຖານ ຯລຯ ສຳລັບເຫຼົ່າອະສັນຍະສັດຕະພົມ ຯລຯ ກະຕັດຕະຮູບທີ່ເປັນອຸປາທາຍະຮູບເຊິ່ງກະທົບບໍ່ໄດ້ອາໄສອາໂປທາດເກີດຂຶ້ນ ໂມຫະທີ່ປະກອບດ້ວຍວິຈິກິດສາ ແລະທີ່ປະກອບດ້ວຍອຸດທັດຈະອາໄສຂັນທີ່ປະກອບດ້ວຍວິຈິກິດສາ ແລະທີ່ປະກອບດ້ວຍອຸດທັດຈະເກີດຂຶ້ນ (໑)

(ສຳລັບບົດທີ່ມີສະພາວະທຳທີ່ກະທົບບໍ່ໄດ້ເປັນມູນ ເພີ່ງເພີ່ມ ໔ ວາຣະນອກນີ້ ແມ່ນ ໃນຄະຕະນາກໍເພີ່ງເພີ່ມ ໖ ວາຣະ ຮູ້ແລ້ວເພີ່ງເພີ່ມມະຫາພູຕະຮູບທີ່ເປັນພາຍໃນແລະພາຍນອກທັງໝົດ)

## ນະອາຣຳມະນະປັດໄຈເປັນຕົ້ນ

[໖໑] ສະພາວະທຳທີ່ກະທົບໄດ້ອາໄສສະພາວະທຳທີ່ກະທົບໄດ້ເກີດຂຶ້ນ ຍ້ອນນະອາຣຳມະນະປັດໄຈ (ຫຍໍ້ໄວ້ທັງໝົດ) ຍ້ອນໂນວິຄະຕະປັດໄຈ

### ໔. ປັດຈະຍະປັດຈະນີຍະ ໔. ສັງຂະຍາວານ

## ສຸດທະໄນ

| | | |
|---|---|---|
| [໖໔] ນະເຫຕຸປັດໄຈ | ມີ | ໙ ວາຣະ |
| ນະອາຣຳມະນະປັດໄຈ | ມີ | ໙ ວາຣະ |
| ນະອະທິປະຕິປັດໄຈ | ມີ | ໙ ວາຣະ |
| ນະອະນັນຕະຣະປັດໄຈ | ມີ | ໙ ວາຣະ |

| | | |
|---|---|---|
| ນະສະມະນັນຕະຣະປັດໄຈ | ມີ | ໙ ວາຣະ |
| ນະອັນຍະມັນຍະປັດໄຈ | ມີ | ໙ ວາຣະ |
| ນະອຸປະນິດສະຍະປັດໄຈ | ມີ | ໙ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ | ໙ ວາຣະ |
| ນະປັດສາຊາຕະປັດໄຈ | ມີ | ໙ ວາຣະ |
| ນະອາເສວະນະປັດໄຈ | ມີ | ໙ ວາຣະ |
| ນະກຳມະປັດໄຈ | ມີ | ໙ ວາຣະ |
| ນະວິປາກະປັດໄຈ | ມີ | ໙ ວາຣະ |
| ນະອາຫາຣະປັດໄຈ | ມີ | ໙ ວາຣະ |
| ນະອິນທະຣິຍະປັດໄຈ | ມີ | ໙ ວາຣະ |
| ນະຊານະປັດໄຈ | ມີ | ໙ ວາຣະ |
| ນະມັກຄະປັດໄຈ | ມີ | ໙ ວາຣະ |
| ນະສຳປະຍຸດຕະປັດໄຈ | ມີ | ໙ ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ | ໙ ວາຣະ |
| ໂນນັດຖິປັດໄຈ | ມີ | ໙ ວາຣະ |
| ໂນວິຄະຕະປັດໄຈ | ມີ | ໙ ວາຣະ |

**ປັດຈະນີຍະ ຈົບ**

## ໓. ປັດຈະຍານຸໂລມປັດຈະນີຍະ

### ເຫຕຸທຸກະໄນ

| | | | |
|---|---|---|---|
| [໓໓] ນະອາຣຳມະນະປັດໄຈ | ກັບເຫຕຸປັດໄຈ | ມີ | ໙ ວາຣະ |
| ນະອະທິປະຕີປັດໄຈ | ,, | ມີ | ໙ ວາຣະ |
| ນະອະນັນຕະຣະປັດໄຈ | ,, | ມີ | ໙ ວາຣະ |
| ນະສະມະນັນຕະຣະປັດໄຈ | ,, | ມີ | ໙ ວາຣະ |
| ນະອັນຍະມັນຍະປັດໄຈ | ,, | ມີ | ໙ ວາຣະ |
| ນະອຸປະນິດສະຍະປັດໄຈ | ,, | ມີ | ໙ ວາຣະ |
| ນະປຸເຣຊາຕະປັດໄຈ | ,, | ມີ | ໙ ວາຣະ |
| ນະປັດສາຊາຕະປັດໄຈ | ,, | ມີ | ໙ ວາຣະ |
| ນະອາເສວະນະປັດໄຈ | ,, | ມີ | ໙ ວາຣະ |
| ນະກຳມະປັດໄຈ | ,, | ມີ | ໑ ວາຣະ |

| | | | |
|---|---|---|---|
| ນະວິປາກະປັດໄຈ | ,, | ມີ | ໗ ວາຣະ |
| ນະສໍາປະຍຸດຕະປັດໄຈ | ,, | ມີ | ໗ ວາຣະ |
| ນະວິບປະຍຸດຕະປັດໄຈ | ,, | ມີ | ໑ ວາຣະ |
| ໂນນັດຖິປັດໄຈ | ,, | ມີ | ໗ ວາຣະ |
| ໂນວິຄະຕະປັດໄຈ | ,, | ມີ | ໗ ວາຣະ |

**ອະນຸໂລມປັດຈະນີຍະ ຈົບ**

# ໔. ປັດຈະຍະປັດຈະນີຍານຸໂລມ

## ນະເຫຕຸທຸກະໄນ

| | | | | |
|---|---|---|---|---|
| [໖໔] ອາຣໍາມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ | ໑ ວາຣະ | |
| ອະນັນຕະຣະປັດໄຈ | ,, | ມີ | ໑ ວາຣະ | |
| ສະມະນັນຕະຣະປັດໄຈ | ,, | ມີ | ໑ ວາຣະ | |
| ສະຫະຊາຕະປັດໄຈ | ,, | ມີ | ໗ ວາຣະ | |
| ອັນຍະມັນຍະປັດໄຈ | ,, | ມີ | ໖ ວາຣະ | |
| ນິດສະຍະປັດໄຈ | ,, | ມີ | ໗ ວາຣະ | |
| ອຸປະນິດສະຍະປັດໄຈ | ,, | ມີ | ໑ ວາຣະ | |
| ປຸເຣຊາຕະປັດໄຈ | ,, | ມີ | ໑ ວາຣະ | |
| ອາເສວະນະປັດໄຈ | ,, | ມີ | ໑ ວາຣະ | |
| ກໍາມະປັດໄຈ | ,, | ມີ | ໗ ວາຣະ | ໗ລ໗ |
| ມັກຄະປັດໄຈ | ,, | ມີ | ໑ ວາຣະ | |
| ສໍາປະຍຸດຕະປັດໄຈ | ,, | ມີ | ໑ ວາຣະ | |
| ວິບປະຍຸດຕະປັດໄຈ | ,, | ມີ | ໗ ວາຣະ | |
| ອັດຖິປັດໄຈ | ,, | ມີ | ໗ ວາຣະ | |
| ນັດຖິປັດໄຈ | ,, | ມີ | ໑ ວາຣະ | |
| ວິຄະຕະປັດໄຈ | ,, | ມີ | ໑ ວາຣະ | |
| ອະວິຄະຕະປັດໄຈ | ,, | ມີ | ໗ ວາຣະ | |

**ປັດຈະນີຍານຸໂລມ ຈົບ**

(ສະຫະຊາຕະວານເໝືອນກັບປະຕິດຈະວານ)

# ໑໐. ສັບປະຕິຄະທຸກະ ໕. ປັດຈະຍະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໕໔] ສະພາວະທຳທີ່ກະທົບໄດ້ເຮັດສະພາວະທຳທີ່ກະທົບໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ມີ ໕ ວາຣະ

ສະພາວະທຳທີ່ກະທົບບໍ່ໄດ້ເຮັດສະພາວະທຳທີ່ກະທົບບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໕ ແລະຈິດຕະສະມຸດຖານຣູບທີ່ກະທົບບໍ່ໄດ້ເຮັດຂັນ ໑ ທີ່ກະທົບບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ເຮັດຂັນ ໔ ຯລຯ ໃນປະຕິສົນທິຂະນະ ຯລຯ ຈິດຕະສະມຸດຖານຣູບແລະກະຕັດຕະຣູບທີ່ເປັນອຸປາທາຍະຣູບເຊິ່ງກະທົບບໍ່ໄດ້ເຮັດອາໂປທາດໃຫ້ເປັນປັດໄຈເກີດຂຶ້ນ ອິດຖິນຊີ ຯລຯ ກະວະລິງກາຣາຫານເຮັດອາໂປທາດໃຫ້ເປັນປັດໄຈເກີດຂຶ້ນ ຂັນທີ່ກະທົບບໍ່ໄດ້ເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (໑)

(ຫ້າວາຣະທີ່ເຫຼືອເໝືອນກັບປະຕິດຈະວານ)

### ອາຣຳມະນະປັດໄຈເປັນຕົ້ນ

[໕໕] ສະພາວະທຳທີ່ກະທົບບໍ່ໄດ້ເຮັດສະພາວະທຳທີ່ກະທົບໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຈັກຂຸວິນຍານເຮັດຈັກຂາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ກາຍວິນຍານເຮັດກາຍາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ (໑)

ສະພາວະທຳທີ່ກະທົບບໍ່ໄດ້ເຮັດສະພາວະທຳທີ່ກະທົບບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຂັນ ໕ ເຮັດຂັນ ໑ ທີ່ກະທົບບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ເຮັດຂັນ ໔ ຯລຯ ໃນປະຕິສົນທິຂະນະ ຯລຯ ຂັນທີ່ກະທົບບໍ່ໄດ້ເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (໑)

ສະພາວະທຳທີ່ກະທົບບໍ່ໄດ້ເຮັດສະພາວະທຳທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ໃຫ້ເປັນປັດໄຈເກີດຂຶ້ນຍ້ອນອາຣຳມະນະປັດໄຈ ໄດ້ແກ່ ຂັນ ໕ ເຮັດຂັນ ໑ ທີ່ປະກອບດ້ວຍຈັກຂຸວິນຍານແລະເຮັດຈັກຂາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ຂັນ ໕ ເຮັດຂັນ ໑ ທີ່ປະກອບດ້ວຍກາຍວິນຍານແລະເຮັດກາຍາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ຍ້ອນອະທິປະຕິປັດໄຈ (ຫຍໍ້) ຍ້ອນອະວິຄະຕະປັດໄຈ

## ໑. ປັດຈະຍານຸໂລມ ໘. ສັງຂະຍາວານ

### ສຸດທະໄນ

| | | |
|---|---|---|
| [໖໗] ເຫຕຸປັດໄຈ | ມີ | ໙ ວາຣະ |
| ອາຣໍາມະນະປັດໄຈ | ມີ | ໖ ວາຣະ |
| ອະທິປະຕິປັດໄຈ | ມີ | ໙ ວາຣະ |
| ອະນັນຕະຣະປັດໄຈ | ມີ | ໖ ວາຣະ |
| ສະມະນັນຕະຣະປັດໄຈ | ມີ | ໖ ວາຣະ |
| ສະຫະຊາຕະປັດໄຈ | ມີ | ໙ ວາຣະ |
| ອັນຍະມັນຍະປັດໄຈ | ມີ | ໓ ວາຣະ |
| ນິດສະຍະປັດໄຈ | ມີ | ໙ ວາຣະ |
| ອຸປະນິດສະຍະປັດໄຈ | ມີ | ໖ ວາຣະ |
| ປຸເຣຊາຕະປັດໄຈ | ມີ | ໖ ວາຣະ |
| ອາເສວະນະປັດໄຈ | ມີ | ໑ ວາຣະ |
| ກໍາມະປັດໄຈ | ມີ | ໙ ວາຣະ ໗໑໗ |
| ອະວິຄະຕະປັດໄຈ | ມີ | ໙ ວາຣະ |

(ເພິ່ງເຮັດການນັບປັດຈະນິຍະແນວນີ້ ນິດສະຍະວາຣະເໝືອນກັບປັດຈະຍະວານ)

(ແມ່ນໃນສັງສັດຖະວານ ທຸກປັດໄຈ ມີປັດໄຈລະ ໑ ວາຣະ ຫຍໍ້ ຍ້ອນອະວິຄະຕະປັດໄຈ ມີພຽງ ໑ ວາຣະ ເພິ່ງເພີ່ມເປັນ ໘ ວາຣະ)

## ໑໐. ສັບປະຕິຄະທຸກະ ກ. ບັນທາວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໖໘] ສະພາວະທໍາທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສະພາວະທໍາທີ່ກະທົບບໍ່ໄດ້ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສໍາປະຍຸດຕະຂັນແລະຈິດຕະສະມຸດຖານຮູບ ທີ່ກະທົບບໍ່ໄດ້ໂດຍເຫຕຸປັດໄຈ ໃນປະຕິສົນທິຂະນະ ໗໑໗ (໑)

ສະພາວະທໍາທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສະພາວະທໍາທີ່ກະທົບໄດ້ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ກະທົບບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ກະທົບໄດ້ໂດຍເຫຕຸປັດໄຈ ໃນປະຕິສົນທິຂະນະ ໗໑໗ (໘)

ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບທີ່ກະທົບໄດ້ແລະທີ່ກະທົບບໍ່ໄດ້ໂດຍເຫຕຸປັດໄຈ ໃນປະຕິສົນທິຂະນະ ฯลฯ (໓)

## ອາຣຳມະນະປັດໄຈ

[໖໙] ສະພາວະທຳທີ່ກະທົບໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນເຫັນແຈ້ງຈັກຂຸ ฯลฯ ໂຜດຖັບພະ ฯลฯ ໂດຍເປັນສະພາວະບໍ່ທ່ຽງ ฯลฯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ ຮູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ฯลฯ ໂຜດຖັບພາຍະຕະນະເປັນປັດໄຈ ແກ່ກາຍວິນຍານ ฯลฯ ຂັນທີ່ກະທົບໄດ້ເປັນປັດໄຈແກ່ອິດທິວິທະຍານ ປຸບເພນິວາສານຸດສະຕິຍານ ອະນາຄະຕັງສະຍານ ແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ (໑)

ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ແລ້ວພິຈາລະນາກຸສົນນັ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ອອກຈາກຊານແລ້ວພິຈາລະນາຊານ ພຣະອະຣິຍະອອກຈາກມັກແລ້ວພິຈາລະນາມັກ ພິຈາລະນາຜົນ ພິຈາລະນານິບພານ ນິບພານເປັນປັດໄຈ ແກ່ໂຄຕະຣະພູ ໂວທານ ມັກ ຜົນ ແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ ພຣະອະຣິຍະພິຈາລະນາກິເລດທີ່ລະໄດ້ແລ້ວ ພິຈາລະນາກິເລດທີ່ຂົ່ມໄດ້ແລ້ວ ຮູ້ກິເລດທີ່ເຄີຍເກີດຂຶ້ນ ເຫັນແຈ້ງ ຫະໄທວັດຖຸ ฯลฯ ອິດຖິນຊີ ฯลฯ ປຸຣິສິນຊີ ฯลฯ ຊີວິຕິນຊີ ฯลฯ ອາໂປທາດ ແລະກະວະລິງກາຣາຫານໂດຍເປັນສະພາວະບໍ່ທ່ຽງ ฯลฯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນຮູ້ຈິດຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍຈິດທີ່ກະທົບບໍ່ໄດ້ດ້ວຍເຈໂຕປະຣິຍະຍານ ອາກາສານັນຈາຍະຕະນະເປັນປັດໄຈແກ່ວິນຍານັນຈາຍະຕະນະ ฯลฯ ອາກິນຈັນຍາຍະຕະນະເປັນປັດໄຈແກ່ເນວະສັນຍານາສັນຍາຍະຕະນະ ฯลฯ ຂັນທີ່ກະທົບບໍ່ໄດ້ເປັນປັດໄຈແກ່ອິດທິວິທະຍານ ເຈໂຕປະຣິຍະຍານ ປຸບເພນິວາສານຸດສະຕິຍານ ຍະຖາກຳມູປະຄະຍານ ອະນາຄະຕັງສະຍານ ແລະອາວັດຊະນະຈິດໂດຍອາຣຳມະນະປັດໄຈ (໑)

## ອະທິປະຕິປັດໄຈ

[໗໐] ສະພາວະທຳທີ່ກະທົບໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸ ฯลฯ ໂຜດຖັບພະໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ (໑)

ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິ ແລະສະຫະຊາຕາທິປະຕິ

ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວ ພິຈາລະນາກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈານາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວໃຫ້ເປັນອາລົມຢ່າງໜັກແໜ້ນ ອອກຈາກຊານແລ້ວພິຈາລະນາຊານໃຫ້ເປັນອາລົມຢ່າງໜັກແໜ້ນ ພຣະອະຣິຍະອອກຈາກມັກແລ້ວພິຈາລະນາມັກໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາຜົນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນານິບພານໃຫ້ເປັນອາລົມຢ່າງໜັກແໜ້ນ ນິບພານເປັນປັດໄຈແກ່ໂຄຕະຣະພູໂວທານ ມັກ ແລະຜົນໂດຍອະທິປະຕິປັດໄຈ ບຸກຄົນຍິນດີເພີດເພີນທະໄທວັດຖຸ ຯລຯ ອິດຖິນຊີ ຯລຯ ປຸຣິສິນຊີ ຯລຯ ຊີວິຕິນຊີ ຯລຯ ອາໂປທາດ ແລະກະວະລິງກາຣາຫານໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນ ທະໄທວັດຖຸເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບທີ່ກະທົບບໍ່ໄດ້ໂດຍອະທິປະຕິປັດໄຈ (໑)

ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບໄດ້ໂດຍອະທິປະຕິປັດໄຈມີຢ່າງດຽວ ຄື ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ກະທົບບໍ່ໄດ້ເປັນປັດໄຈແກ່ຈິດຕະສະມຸດຖານຮູບທີ່ກະທົບໄດ້ໂດຍອະທິປະຕິປັດໄຈ (໒)

ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ກະທົບບໍ່ໄດ້ ເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ໂດຍອະທິປະຕິປັດໄຈ (໓)

## ອະນັນຕະຣະປັດໄຈ

[໗໑] ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ກະທົບບໍ່ໄດ້ເຊິ່ງເກີດກ່ອນ ໆ ຯລຯ ເປັນປັດໄຈແກ່ຜົນສະມາບັດໂດຍອະນັນຕະຣະປັດໄຈ

## ສະມະນັນຕະຣະປັດໄຈ

[໗໒] ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍສະມະນັນຕະຣະປັດໄຈ ຯລຯ

## ສະຫະຊາຕະປັດໄຈເປັນຕົ້ນ

[໗໖] ສະພາວະທຳທີ່ກະທົບໄດ້ເປັນປັດໄຈແກ່ສະພາວະທຳທີ່ກະທົບໄດ້ໂດຍສະຫະຊາຕະປັດໄຈ ມີ ໙ ວາຣະ ເປັນປັດໄຈໂດຍອັນຍະມັນຍະປັດໄຈ ມີ ໖ ວາຣະ ເປັນປັດໄຈໂດຍນິດສະຍະປັດໄຈ ມີ ໙ ວາຣະ

## ອຸປະນິດສະຍະປັດໄຈ

[໗໘] ສະພາວະທຳທີ່ກະທົບໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍອຸປະນິດສະຍະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສອຸຕຸແລະເສນາສະນະແລ້ວໃຫ້ທານ ຯລຯ ທຳລາຍສົງ ອຸຕຸແລະເສນາສະນະເປັນປັດໄຈແກ່ສັດທາ ຯລຯ ຜົນສະມາບັດໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວໃຫ້ທານ ຯລຯ ຖືທິດຖິ ອາໄສສີນ ຯລຯ ສຸກທາງກາຍ ທຸກທາງກາຍ ແລະໂພຊະນະແລ້ວໃຫ້ທານ ຯລຯ ທຳລາຍສົງ ສັດທາ ຯລຯ ໂພຊະນະເປັນປັດໄຈແກ່ສັດທາ ຯລຯ ຜົນສະມາບັດໂດຍອຸປະນິດສະຍະປັດໄຈ (໑)

## ປຸເຣຊາຕະປັດໄຈ

[໗໙] ສະພາວະທຳທີ່ກະທົບໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະ ແລະວັດຖຸປຸເຣຊາຕະ

ອາຣຳມະນະປຸເຣຊາຕະ ໄດ້ແກ່ ບຸກຄົນເຫັນແຈ້ງຈັກຂຸ ຯລຯ ໂຜດຖັບພະໂດຍເປັນສະພາວະບໍ່ທ່ຽງ ຯລຯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ ຣູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ໂຜດຖັບພາຍະຕະນະເປັນປັດໄຈ ແກ່ກາຍວິນຍານໂດຍປຸເຣຊາຕະປັດໄຈ

ວັດຖຸປຸເຣຊາຕະ ໄດ້ແກ່ ຈັກຂາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ກາຍາຍະຕະນະເປັນປັດໄຈແກ່ກາຍວິນຍານໂດຍປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະ ແລະວັດຖຸປຸເຣຊາຕະ

ອາຣຳມະນະປຸເຣຊາຕະ ໄດ້ແກ່ ບຸກຄົນເຫັນແຈ້ງຫະໄທວັດຖຸ ໆລໆ ອິດຖິນຊີ ປຸຣິສິນຊີ ຊີວິຕິນຊີ ອາໂປທາດ ແລະກະວະລິງກາຣາຫານໂດຍເປັນສະພາວະບໍ່ທ່ຽງ ໆລໆ ໂທມະນັດຈຶ່ງເກີດຂຶ້ນ

ວັດຖຸປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ກະທົບບໍ່ໄດ້ໂດຍປຸເຣຊາຕະປັດໄຈ (໑)

ສະພາວະທຳທີ່ກະທົບໄດ້ ແລະທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ ໂດຍປຸເຣຊາຕະປັດໄຈ ມີ ໒ ຢ່າງ ຄື ອາຣຳມະນະປຸເຣຊາຕະ ແລະວັດຖຸປຸເຣຊາຕະ ໄດ້ແກ່ ຈັກຂາຍະຕະນະແລະຫະໄທວັດຖຸ ໆລໆ ໂຜດຖັບພາຍະຕະນະແລະຫະໄທວັດຖຸເປັນປັດໄຈແກ່ຂັນທີ່ກະທົບບໍ່ໄດ້ໂດຍປຸເຣຊາຕະປັດໄຈ (໑)

## ປັດສາຊາຕະປັດໄຈ

[໗໖] ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍປັດສາຊາຕະປັດໄຈ ໄດ້ແກ່ ຂັນທີ່ກະທົບບໍ່ໄດ້ເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງກະທົບບໍ່ໄດ້ໂດຍປັດສາຊາຕະປັດໄຈ (ເພິ່ງເພີ່ມບົດທີ່ເປັນມູນ) ຂັນທີ່ກະທົບບໍ່ໄດ້ເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນ ເຊິ່ງກະທົບໄດ້ໂດຍປັດສາຊາຕະປັດໄຈ (ເພິ່ງເພີ່ມບົດທີ່ເປັນມູນ) ຂັນທີ່ກະທົບບໍ່ໄດ້ເຊິ່ງເກີດພາຍຫຼັງເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນເຊິ່ງກະທົບໄດ້ແລະກະທົບບໍ່ໄດ້ໂດຍປັດສາຊາຕະປັດໄຈ (ສຳລັບປັດໄຈທັງ ໒ ເພິ່ງເພີ່ມບົດທີ່ເປັນມູນ) (໓)

## ອາເສວະນະປັດໄຈ

[໗໗] ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍ

ອາເສວະນະປັດໄຈ ໄດ້ແກ່ ຂັນທີ່ກະທົບບໍ່ໄດ້ເຊິ່ງເກີດກ່ອນ ໆ ໆລໆ ໂວທານເປັນປັດໄຈແກ່ມັກໂດຍອາເສວະນະປັດໄຈ (໑)

## ກຳມະປັດໄຈ

[໗໘] ສະພາວະທຳທີ່ກະທົບບໍ່ໄດ້ເປັນປັດໄຈ ແກ່ສະພາວະທຳທີ່ກະທົບບໍ່ໄດ້ໂດຍກຳມະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ກະທົບບໍ່ໄດ້ເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບທີ່ກະທົບບໍ່ໄດ້ໂດຍກຳມະປັດໄຈ ໃນປະຕິສົນທິຂະນະ ໆລໆ

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ກະທົບບໍ່ໄດ້ເປັນປັດໄຈແກ່ຂັນທີ່ເປັນວິບາກແລະກະຕັດຕະຮູບທີ່ກະທົບບໍ່ໄດ້ໂດຍກຳມະປັດໄຈ (໑)

ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະໂດຍວິບປະຍຸດຕະປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍຄັນຖະໂດຍວິບປະຍຸດຕະປັດໄຈ (໒)

ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແລະທີ່ວິບປະຍຸດຈາກຄັນຖະໂດຍວິບປະຍຸດຕະປັດໄຈ ມີຢ່າງດຽວ ຄື ປຸເຣຊາຕະ ໄດ້ແກ່ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິ ໂລພະ ຂັນທີ່ປະກອບດ້ວຍໂທມະນັດ ແລະປະຕິຄະໂດຍວິບປະຍຸດຕະປັດໄຈ (໓)

[໙໒] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະເປັນປັດໄຈແກ່ສະພາວະທຳທີ່ວິບປະຍຸດຈາກຄັນຖະໂດຍວິບປະຍຸດຕະປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ

ສະຫະຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິແລະໂລພະເປັນປັດໄຈ ແກ່ຈິດຕະສະມຸດຖານຮູບໂດຍວິບປະຍຸດຕະປັດໄຈ ຂັນທີ່ປະກອບດ້ວຍໂທມະນັດແລະປະຕິຄະເປັນປັດໄຈ ແກ່ຈິດຕະສະມຸດຖານຮູບໂດຍວິບປະຍຸດຕະປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິ ໂລພະ ຂັນທີ່ປະກອບດ້ວຍໂທມະນັດ ແລະປະຕິຄະເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍວິບປະຍຸດຕະປັດໄຈ (໑)

## ອັດຖິປັດໄຈ

[໙໓] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະໂດຍອັດຖິປັດໄຈ ມີ ໑ ວາຣະ (ເໝືອນກັບປະຕິດຈະວານ) (໑)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ວິບປະຍຸດຈາກຄັນຖະໂດຍອັດຖິປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ (ຫຍໍ້ ເພິ່ງຈຳແນກໄວ້) (໒)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແລະທີ່ວິບປະຍຸດຈາກຄັນຖະໂດຍອັດຖິປັດໄຈ ມີ ໑ ວາຣະ (ເໝືອນກັບປະຕິດຈະວານ) (໓)

[໙໔] ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ວິບປະຍຸດຈາກຄັນຖະໂດຍອັດຖິປັດໄຈ ມີ ໕ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ (ຫຍໍ້ ເພິ່ງຈຳແນກໄວ້) (໑)

ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະໂດຍ ອັດຖິປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ໂລພະທີ່ວິບປະຍຸດຈາກທິດຖິເປັນປັດໄຈ ແກ່ສຳປະຍຸດຕະຂັນໂດຍອັດຖິປັດໄຈ ປະຕິຄະທີ່ປະກອບດ້ວຍໂທມະນັດເປັນປັດໄຈແກ່ສຳປະຍຸດຕະຂັນໂດຍອັດຖິປັດໄຈ

ປຸເຣຊາຕະ ໄດ້ແກ່ ບຸກຄົນຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ຍ້ອນຜາຣົບຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນ ຣາຄະທີ່ສຳປະຍຸດດ້ວຍຄັນຖະ ຯລຯ ທິດຖິ ຯລຯ ໂທມະນັດຈຶ່ງເກີດຂຶ້ນ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ສຳປະຍຸດດ້ວຍຄັນຖະໂດຍອັດຖິປັດໄຈ (໔)

ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແລະທີ່ວິບປະຍຸດຈາກຄັນຖະໂດຍອັດຖິປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ໂລພະທີ່ວິບປະຍຸດຈາກທິດຖິເປັນປັດໄຈ ແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ປະຕິຄະເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ

ປຸເຣຊາຕະ ໄດ້ແກ່ ຍ້ອນຜາຣົບຈັກຂຸ ຯລຯ ຫະໄທວັດຖຸ ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິ ໂລພະ ຂັນທີ່ປະກອບດ້ວຍໂທມະນັດແລະປະຕິຄະຈຶ່ງເກີດຂຶ້ນ ຫະໄທວັດຖຸເປັນປັດໄຈແກ່ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິ ໂລພະ ຂັນທີ່ປະກອບດ້ວຍໂທມະນັດແລະປະຕິຄະໂດຍອັດຖິປັດໄຈ (໓)

[໗໕] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະໂດຍອັດຖິປັດໄຈ ມີ ໒ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ສຳປະຍຸດດ້ວຍຄັນຖະແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໓ ໂດຍອັດຖິປັດໄຈ ຯລຯ ຂັນ ໒ ຯລຯ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິແລະໂລພະເປັນ ປັດໄຈແກ່ຂັນ ໓ ໂດຍອັດຖິປັດໄຈ ຯລຯ ຂັນ ໒ ຯລຯ ຂັນ ໑ ທີ່ປະກອບດ້ວຍ ໂທມະນັດແລະປະຕິຄະເປັນປັດໄຈແກ່ຂັນ ໓ ໂດຍອັດຖິປັດໄຈ ຯລຯ ຂັນ ໒ ຯລຯ (໑)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະເປັນປັດໄຈແກ່ສະພາວະທຳທີ່ວິບປະຍຸດຈາກຄັນຖະໂດຍອັດຖິປັດໄຈ ມີ ໕ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍຄັນຖະ ແລະມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ

ສະຫະຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິແລະໂລພະເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ

ສະຫະຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍໂທມະນັດ ແລະປະຕິຄະເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິ ແລະຫະໄທວັດຖຸເປັນປັດໄຈແກ່ໂລພະໂດຍອັດຖິປັດໄຈ ຂັນທີ່ປະກອບດ້ວຍໂທມະນັດແລະຫະໄທວັດຖຸເປັນປັດໄຈແກ່ປະຕິຄະໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິ ໂລພະ ຂັນທີ່ປະກອບດ້ວຍໂທມະນັດ ແລະປະຕິຄະເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍຄັນຖະ ແລະກະວະລິງກາຣາຫານເປັນປັດໄຈແກ່ກາຍນີ້ໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ຂັນທີ່ສຳປະຍຸດດ້ວຍຄັນຖະ ແລະຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕະຮູບໂດຍອັດຖິປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະເປັນປັດໄຈແກ່ສະພາວະທຳ ທີ່ສຳປະຍຸດດ້ວຍຄັນຖະແລະທີ່ວິບປະຍຸດຈາກຄັນຖະໂດຍອັດຖິປັດໄຈ ມີ ໔ ຢ່າງ ຄືສະຫະຊາຕະ ແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ປະກອບດ້ວຍໂລພະເຊິ່ງວິບປະຍຸດຈາກທິດຖິແລະໂລພະເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຯລຯ ຂັນ ໔ ຯລຯ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ປະກອບດ້ວຍໂທມະນັດແລະປະຕິຄະເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຯລຯ ຂັນ ໔ ຯລຯ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ປະກອບດ້ວຍໂລພະ ເຊິ່ງວິບປະຍຸດຈາກທິດຖິແລະຫະໄທວັດຖຸ ເປັນປັດໄຈແກ່ຂັນ ໓ ແລະໂລພະໂດຍອັດຖິປັດໄຈ ຯລຯ ຂັນ ໔ ຯລຯ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ປະກອບດ້ວຍໂທມະນັດ ແລະຫະໄທວັດຖຸເປັນປັດໄຈແກ່ຂັນ ໓ ແລະປະຕິຄະໂດຍອັດຖິປັດໄຈ ຯລຯ ຂັນ ໔ ຯລຯ (໓)

## ໑. ປັດຈະຍານຸໂລມ ໔. ສັງຂະຍາວານ

## ສຸດທະໄນ

[໙໓] ເຫຕຸປັດໄຈ ມີ ໙ ວາຣະ

ອາຣຳມະນະປັດໄຈ ມີ ໙ ວາຣະ

| | |
|---|---|
| ອະທິປະຕິປັດໄຈ | ມີ ໗ ວາຣະ |
| ອະນັນຕະຣະປັດໄຈ | ມີ ໗ ວາຣະ |
| ສະມະນັນຕະຣະປັດໄຈ | ມີ ໗ ວາຣະ |
| ສະຫະຊາຕະປັດໄຈ | ມີ ໗ ວາຣະ |
| ອັນຍະມັນຍະປັດໄຈ | ມີ ໖ ວາຣະ |
| ນິດສະຍະປັດໄຈ | ມີ ໗ ວາຣະ |
| ອຸປະນິດສະຍະປັດໄຈ | ມີ ໗ ວາຣະ |
| ປຸເຣຊາຕະປັດໄຈ | ມີ ໓ ວາຣະ |
| ປັດສາຊາຕະປັດໄຈ | ມີ ໓ ວາຣະ |
| ອາເສວະນະປັດໄຈ | ມີ ໗ ວາຣະ |
| ກຳມະປັດໄຈ | ມີ ໔ ວາຣະ |
| ວິປາກະປັດໄຈ | ມີ ໑ ວາຣະ |
| ອາຫາຣະປັດໄຈ | ມີ ໔ ວາຣະ |
| ອິນທະຣິຍະປັດໄຈ | ມີ ໔ ວາຣະ |
| ຊານະປັດໄຈ | ມີ ໔ ວາຣະ |
| ມັກຄະປັດໄຈ | ມີ ໔ ວາຣະ |
| ສຳປະຍຸດຕະປັດໄຈ | ມີ ໖ ວາຣະ |
| ວິບປະຍຸດຕະປັດໄຈ | ມີ ໕ ວາຣະ |
| ອັດຖິປັດໄຈ | ມີ ໗ ວາຣະ |
| ນັດຖິປັດໄຈ | ມີ ໗ ວາຣະ |
| ວິຄະຕະປັດໄຈ | ມີ ໗ ວາຣະ |
| ອະວິຄະຕະປັດໄຈ | ມີ ໗ ວາຣະ |

**ອະນຸໂລມ ຈົບ**

## ໔. ປັດຈະນີຍຸດທາຣະ

[໙໗] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ວິບປະຍຸດຈາກຄັນຖະໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ປັດສາຊາຕະປັດໄຈ ແລະກຳມະປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະໂດຍອາຣົມມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (๓)

[໙๘] ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ວິບປະຍຸດຈາກຄັນຖະໂດຍອາຣົມມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ປຸເຣຊາຕະປັດໄຈ ປັດສາຊາຕະປັດໄຈ ກຳມະປັດໄຈ ອາຫາຣະປັດໄຈ ແລະອິນທະຣິຍະປັດໄຈ (໑)

ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະໂດຍອາຣົມມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະປຸເຣຊາຕະປັດໄຈ (໔)

ສະພາວະທຳທີ່ວິບປະຍຸດຈາກຄັນຖະເປັນປັດໄຈ ແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແລະທີ່ວິບປະຍຸດຈາກຄັນຖະໂດຍອາຣົມມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະປຸເຣຊາຕະປັດໄຈ (๓)

[໙໙] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະໂດຍອາຣົມມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະເປັນປັດໄຈແກ່ສະພາວະທຳທີ່ວິບປະຍຸດຈາກຄັນຖະໂດຍອາຣົມມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະປັດສາຊາຕະປັດໄຈ (໔)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແລະທີ່ວິບປະຍຸດຈາກຄັນຖະໂດຍອາຣົມມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (๓)

## ໔. ປັດຈະຍະປັດຈະນີຍະ ໔. ສັງຂະຍາວານ

| | |
|---|---|
| [໑໐໐] ນະເຫຕຸປັດໄຈ | ມີ ໙ ວາຣະ |
| ນະອາຣົມມະນະປັດໄຈ | ມີ ໙ ວາຣະ |

(ທຸກປັດໄຈມີປັດໄຈລະ ໙ ວາຣະ)

| | |
|---|---|
| ໂນອະວິຄະຕະປັດໄຈ | ມີ ໙ ວາຣະ |

# ໓. ປັດຈະຍານຸໂລມປັດຈະນີຍະ

## ເຫຕຸທຸກະໄນ

| | | | |
|---|---|---|---|
| [໑໐໑] | ນະອາຣຳມະນະປັດໄຈ | ກັບເຫຕຸປັດໄຈ | ມີ ໙ ວາຣະ |
| | ນະອະທິປະຕິປັດໄຈ | ,, | ມີ ໙ ວາຣະ ¥ລ¥ |
| | ນະສະມະນັນຕະຣະປັດໄຈ | ,, | ມີ ໙ ວາຣະ |
| | ນະອັນຍະມັນຍະປັດໄຈ | ,, | ມີ ໓ ວາຣະ |
| | ນະອຸປະນິດສະຍະປັດໄຈ | ,, | ມີ ໙ ວາຣະ ¥ລ¥ |
| | ນະມັກຄະປັດໄຈ | ,, | ມີ ໙ ວາຣະ |
| | ນະສຳປະຍຸດຕະປັດໄຈ | ,, | ມີ ໓ ວາຣະ |
| | ນະວິບປະຍຸດຕະປັດໄຈ | ,, | ມີ ໖ ວາຣະ |
| | ໂນນັດຖິປັດໄຈ | ,, | ມີ ໙ ວາຣະ |
| | ໂນວິຄະຕະປັດໄຈ | ,, | ມີ ໙ ວາຣະ |

# ໔. ປັດຈະຍະປັດຈະນີຍານຸໂລມ

## ນະເຫຕຸທຸກະໄນ

[໑໐໔] ອາຣຳມະນະປັດໄຈ ກັບນະເຫຕຸປັດໄຈ ມີ ໙ ວາຣະ

ອະທິປະຕິປັດໄຈ ,, ມີ ໙ ວາຣະ

(ເພິ່ງຂະຫຍາຍບົດອະນຸໂລມມາຕິກາໃຫ້ພິສະດານ) ¥ລ¥

ອະວິຄະຕະປັດໄຈ ,, ມີ ໙ ວາຣະ

**ຄັນຖະສຳປະຍຸດຕະທຸກະ ຈົບ**

# ໔໙. ຄັນຖະຄັນຖະນີຍະທຸກະ ໑. ປະຕິດຈະວານ

## ເຫຕຸປັດໄຈ

[໑໐໓] ສະພາວະທຳທີ່ເປັນຄັນຖະ ແລະເປັນອາລົມຂອງຄັນຖະອາໄສສະພາວະທຳທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ອະພິດຊາກາຍະຄັນຖະອາໄສສີລັບພະຕະປະຣາມາດກາຍະຄັນຖະເກີດຂຶ້ນ ສີລັບພະຕະປະຣາມາດກາຍະຄັນຖະອາໄສ

ອະພິດຊາກາຍະຄັນຖະເກີດຂຶ້ນ ອະພິດຊາກາຍະຄັນຖະອາໄສອິທັງສັດຈາພິບິເວສະກາຍະຄັນຖະເກີດຂຶ້ນ ອິທັງສັດຈາພິບິເວສະກາຍະຄັນຖະອາໄສອະພິດຊາກາຍະຄັນຖະເກີດຂຶ້ນ (໑)

ສະພາວະທຳທີ່ເປັນອາລົມຂອງຄັນຖະ ແຕ່ບໍ່ເປັນຄັນຖະອາໄສສະພາວະທຳທີ່ເປັນຄັນຖະ ແລະເປັນອາລົມຂອງຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບ ອາໄສຄັນຖະເກີດຂຶ້ນ (໔)

ສະພາວະທຳທີ່ເປັນຄັນຖະເປັນ ອາລົມຂອງຄັນຖະແລະທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະອາໄສສະພາວະທຳທີ່ເປັນຄັນຖະ ແລະເປັນອາລົມຂອງຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ (໑)

(ປະຕິດຈະວານ ສະຫະຊາຕະວານ ປັດຈະຍະວານ ນິດສະຍະວານ ສັງສັດຖະວານ ແລະສຳປະຍຸດຕະວານ ເໝືອນກັບຄັນຖະທຸກະ ບໍ່ມີຂໍ້ແຕກຕ່າງກັນ)

## ໔໙. ຄັນຖະຄັນຖະນິຍະທຸກະ ກ. ບັນຫາວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໑໐໔] ສະພາວະທຳທີ່ເປັນຄັນຖະ ແລະເປັນອາລົມຂອງຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະ ແລະເປັນອາລົມຂອງຄັນຖະໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເປັນຄັນຖະເປັນປັດໄຈແກ່ສຳປະຍຸດຕະຄັນຖະໂດຍເຫຕຸປັດໄຈ (ເພິ່ງຂະຫຍາຍວາຣະທັງ ໙ ໃຫ້ພິສະດານແນວນີ້)

### ອາຣົາມະນະປັດໄຈ

[໑໐໕] ສະພາວະທຳທີ່ເປັນຄັນຖະ ແລະເປັນອາລົມຂອງຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະໂດຍອາຣົາມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຄັນຖະ ຄັນຖະຈຶ່ງເກີດຂຶ້ນ (ເພິ່ງອ້າງບົດທີ່ເປັນມູນ) ຍ້ອນຜາຣົບຄັນຖະ ຂັນທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະຈຶ່ງເກີດຂຶ້ນ (ເພິ່ງອ້າງບົດທີ່ເປັນມູນ) ຍ້ອນຜາຣົບຄັນຖະ ຄັນຖະແລະສຳປະຍຸດຕະຂັນຈຶ່ງເກີດຂຶ້ນ (໓)

[໑໐໖] ສະພາວະທຳທີ່ເປັນອາລົມຂອງຄັນຖະ ແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະໂດຍອາຣົາມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ

ສະມາທານສີນ ຮັກສາອຸໂປສົດແລ້ວພິຈາລະນາກຸສົນນັ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ฯລฯ ອອກຈາກຊານ ฯລฯ ພຣະອະຣິຍະພິຈາລະນາໂຄຕະຣະພູ ພິຈາລະນາ ໂວທານ ພິຈາລະນາກິເລດທີ່ລະໄດ້ແລ້ວ ພິຈາລະນາກິເລດທີ່ຂົ່ມໄດ້ແລ້ວຮູ້ກິເລດທີ່ເຄີຍເກີດຂຶ້ນ ບຸກຄົນເຫັນແຈ້ງຈັກຂຸ ฯລฯ ຫະໄທວັດຖຸ ຂັນທີ່ເປັນອາລົມຂອງຄັນຖະ ແຕ່ບໍ່ເປັນຄັນຖະໂດຍເປັນສະພາວະບໍ່ທ່ຽງ ฯລฯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ (ເພິ່ງຂະຫຍາຍໃຫ້ພິສະດານທັງໝົດ) ฯລฯ ເປັນປັດໄຈແກ່ອາວັດຊະນະຈິດໂດຍອາຣຳມະນະປັດໄຈ (໑)

ສະພາວະທຳທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສີນ ຮັກສາອຸໂປສົດແລ້ວ ຍິນດີເພີດເພີນກຸສົນນັ້ນ ຍ້ອນຜາຣົບຄວາມຍິນດີເພີດເພີນກຸສົນນັ້ນຣາຄະຈຶ່ງເກີດຂຶ້ນ ທິດຖິ ฯລฯ ວິຈິກິດສາ ฯລฯ ອຸດທັດຈະ ฯລฯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນຍິນດີເພີດເພີນກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ฯລฯ ອອກຈາກຊານແລ້ວ ຍິນດີເພີດເພີນຊານ ฯລฯ ຈັກຂຸ ฯລฯ ຫະໄທວັດຖຸ ຂັນທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ຍ້ອນຜາຣົບຄວາມຍິນດີເພີດເພີນຊານເປັນຕົ້ນນັ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິ ฯລฯ ໂທມະນັດຈຶ່ງເກີດຂຶ້ນ (໒)

ສະພາວະທຳທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະເປັນອາລົມຂອງຄັນຖະ ແລະທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະໂດຍອາຣຳມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສີນ ຮັກສາອຸໂປສົດ ฯລฯ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ฯລฯ ອອກຈາກຊານແລ້ວຍິນດີເພີດເພີນຊານ ฯລฯ ຈັກຂຸ ฯລฯ ຫະໄທວັດຖຸແລະຂັນທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ຍ້ອນຜາຣົບຄວາມຍິນດີເພີດເພີນຊານເປັນຕົ້ນນັ້ນ ຄັນຖະແລະສຳປະຍຸດຕະຂັນຈຶ່ງເກີດຂຶ້ນ (ເພິ່ງຂະຫຍາຍຄວາມທັງ ๓ ວາຣະນອກນີ້ໃຫ້ພິສະດານແບບນີ້) (๓)

(ເພິ່ງເພີ່ມຄຳວ່າ ຍ້ອນຜາຣົບໃນທຸກະນີ້ບໍ່ມີໂລກຸດຕະຣະເໝືອນກັບຄັນຖະທຸກະ ບໍ່ມີຂໍ້ແຕກຕ່າງກັນ ເພິ່ງກຳນົດແນ່ນອນວ່າ ເປັນອາລົມຂອງຄັນຖະ ໃນມັກຄະປັດໄຈເພິ່ງເພີ່ມເປັນ ๔ ວາຣະ)

**ຄັນຖະຄັນຖະນີຍະທຸກະ ຈົບ**

# ໓໐. ຄັນຖະຄັນຖະສຳປະຍຸດຕະທຸກະ ໑. ປະຕິດຈະວານ

## ໑ - ໔. ປັດຈະຍະຈະຕຸກກະໄນ

### ເຫຕຸປັດໄຈ

[໑໐໗] ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະອາໄສສະພາວະທຳທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ອະພິດຊາກາຍະຄັນຖະອາໄສ ສີລັບພະຕະປະຣາມາດກາຍະຄັນຖະເກີດຂຶ້ນ ສີລັບພະຕະປະຣາມາດກາຍະຄັນຖະອາໄສອະພິດຊາ ກາຍະຄັນຖະເກີດຂຶ້ນ ອະພິດຊາກາຍະຄັນຖະອາໄສອິທັງສັດຈາພິນິເວສະກາຍະຄັນຖະເກີດຂຶ້ນ ອິທັງສັດຈາພິນິເວສະກາຍະຄັນຖະອາໄສອະພິດຊາກາຍະຄັນຖະເກີດຂຶ້ນ (໑)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະອາໄສສະພາວະທຳທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ສຳປະຍຸດຕະຂັນອາໄສຄັນຖະເກີດຂຶ້ນ (໒)

ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະອາໄສສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ອະພິດຊາກາຍະຄັນຖະແລະສຳປະຍຸດຕະຂັນອາໄສສີລັບພະຕະປະຣາມາດກາຍະຄັນຖະເກີດຂຶ້ນ (ເພິ່ງຜູກ ເປັນຈັກກະໄນ) (໓)

[໑໐໘] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະອາໄສສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ (໑)

ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະອາໄສສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຄັນຖະອາໄສຂັນທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເກີດຂຶ້ນ (໒)

ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ອາໄສສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຄັນຖະອາໄສຂັນ ໑ ທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ (໓)

[໑໐໙] ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະອາໄສສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຄັນຖະອາໄສຄັນຖະແລະສຳປະຍຸດຕະຂັນເກີດຂຶ້ນ (໑)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະອາໄສສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະແລະອາໄສຄັນຖະເກີດຂຶ້ນ ໆລໆ ອາໄສຂັນ ໔ ໆລໆ (໔)

ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະອາໄສສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະອະພິດຊາກາຍະຄັນຖະອາໄສຂັນ ໑ ທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະແລະອາໄສສີລັບພະຕະປະຣາມາດກາຍະຄັນຖະ ເກີດຂຶ້ນ ໆລໆ ອາໄສຂັນ ໔ ໆລໆ (ເພິ່ງຜູກເປັນຈັກກະໄນ ຫຍໍ້) (໓)

| | |
|---|---|
| [໑໑໐] ເຫຕຸປັດໄຈ | ມີ ໙ ວາຣະ |
| ອາຣຳມະນະປັດໄຈ | ມີ ໙ ວາຣະ |

(ທຸກປັດໄຈມີປັດໄຈລະ ໙ ວາຣະ)

| | |
|---|---|
| ກຳມະປັດໄຈ | ມີ ໙ ວາຣະ |
| ອາຫາຣະປັດໄຈ | ມີ ໙ ວາຣະ ໆລໆ |
| ອະວິຄະຕະປັດໄຈ | ມີ ໙ ວາຣະ |

**ອະນຸໂລມ ຈົບ**

## ໔. ປັດຈະນີຍະ

[໑໑໑] ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະອາໄສສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະເກີດຂຶ້ນຍ້ອນນະອະທິປະຕິປັດໄຈ (ຫຍໍ້)

(ໃນທີ່ນີ້ບໍ່ມີນະເຫຕຸປັດໄຈ)

| | |
|---|---|
| ນະອະທິປະຕິປັດໄຈ | ມີ ໙ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ ໙ ວາຣະ |

| | |
|---|---|
| นะปัดสาຊາຕະປັດໄຈ | ມີ ๗ ວາຣະ |
| ນະອາເສວະນະປັດໄຈ | ມີ ๗ ວາຣະ |
| ນະກຳມະປັດໄຈ | ມີ ๓ ວາຣະ |
| ນະວິປາກະປັດໄຈ | ມີ ๗ ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ ๗ ວາຣະ |

(ໂດຍໄນນີ້ ການນັບ ๔ ຢ່າງນອກນີ້ ສະຫະຊາຕະວານ ປັດຈະຍະວານ ນິດສະຍະວາຣະ ສັງສັດຖະວານ ແລະສຳປະຍຸດຕະວານເໝືອນກັບປະຕິດຈະວານ)

# ๓໐. ຄັນຖະຄັນຖະສຳປະຍຸດຕະທຸກະ ກຸ. ບັນຫາວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໑໑๘] ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະເປັນປັດໄຈແກ່ສຳປະຍຸດຕະຄັນຖະໂດຍເຫຕຸປັດໄຈ (໑)

ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະເປັນປັດໄຈແກ່ສຳປະຍຸດຕະຂັນໂດຍເຫຕຸປັດໄຈ (๒)

ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະເປັນປັດໄຈແກ່ສຳປະຍຸດຕະຂັນແລະຄັນຖະໂດຍເຫຕຸປັດໄຈ (๓)

[໑໑๓] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສຳປະຍຸດຕະຄັນຖະໂດຍເຫຕຸປັດໄຈ (໑)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສຳປະຍຸດຕະຄັນຖະໂດຍເຫຕຸປັດໄຈ (๒)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະໂດຍເຫດຸປັດໄຈ ໄດ້ແກ່ ເຫດທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສຳປະຍຸດຕະຂັນແລະຄັນຖະໂດຍເຫດຸປັດໄຈ (๑)

[໑໑໔] ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະໂດຍເຫດຸປັດໄຈ ໄດ້ແກ່ ເຫດທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເປັນປັດໄຈ ແກ່ສຳປະຍຸດຕະຂັນໂດຍເຫດຸປັດໄຈ (໑)

ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະໂດຍເຫດຸປັດໄຈ ໄດ້ແກ່ ເຫດທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສຳປະຍຸດຕະຂັນໂດຍເຫດຸປັດໄຈ (໒)

ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະ ແລະທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະໂດຍເຫດຸປັດໄຈ ໄດ້ແກ່ ເຫດທີ່ເປັນຄັນຖະສຳປະຍຸດດ້ວຍຄັນຖະແລະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສຳປະຍຸດຕະຂັນແລະຄັນຖະໂດຍເຫດຸປັດໄຈ (๓)

## ອາຣົມມະນະປັດໄຈເປັນຕົ້ນ

[໑໑໕] ສະພາວະທຳທີ່ເປັນຄັນຖະ ແລະສຳປະຍຸດດ້ວຍຄັນຖະເປັນປັດໄຈແກ່ສະພາວະທຳທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຄັນຖະ ຄັນຖະຈຶ່ງເກີດຂຶ້ນ (ເພິ່ງເພີ່ມບົດທີ່ເປັນມູນ) ຍ້ອນຜາຣົບຄັນຖະ ຂັນທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະຈຶ່ງເກີດຂຶ້ນ (ເພິ່ງເພີ່ມບົດທີ່ເປັນມູນ) ຍ້ອນຜາຣົບຄັນຖະ ຂັນທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະຈຶ່ງເກີດຂຶ້ນ (๓)

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະເປັນປັດໄຈແກ່ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະໂດຍອາຣົມມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບຂັນທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ຂັນທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະຈຶ່ງເກີດຂຶ້ນ (ເພິ່ງເພີ່ມບົດທີ່ເປັນມູນ) ຍ້ອນຜາຣົບຂັນທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະຄັນຖະຈຶ່ງເກີດຂຶ້ນ (ເພິ່ງເພີ່ມບົດທີ່ເປັນມູນ) ຍ້ອນຜາຣົບຂັນທີ່ສຳປະຍຸດດ້ວຍຄັນຖະ ແຕ່ບໍ່ເປັນຄັນຖະ ຄັນຖະແລະຂັນທີ່ສຳປະຍຸດດ້ວຍຄັນຖະຈຶ່ງເກີດຂຶ້ນ (๓)

(ເພິ່ງເພີ່ມເປັນ ໑ ວາຣະແມ່ນນອກນີ້ແນວນີ້ເໝືອນກັບອາຣໍາມະນະປັດໄຈ ອະທິປະຕິປັດໄຈ ອະນັນຕະຣະປັດໄຈ ແລະອຸປະນິດສະຍະປັດໄຈ ບໍ່ມີການຈຳແນກໄວ້)

## ໑. ປັດຈະຍານຸໂລມ ໔. ສັງຂະຍາວານ

### ສຸດທະໄນ

| | |
|---|---|
| [໑໑໙] ເຫຕຸປັດໄຈ | ມີ ໙ ວາຣະ |
| ອາຣໍາມະນະປັດໄຈ | ມີ ໙ ວາຣະ |
| ອະທິປະຕິປັດໄຈ | ມີ ໙ ວາຣະ |
| ອະນັນຕະຣະປັດໄຈ | ມີ ໙ ວາຣະ |
| ສະມະນັນຕະຣະປັດໄຈ | ມີ ໙ ວາຣະ |
| ສະຫະຊາຕະປັດໄຈ | ມີ ໙ ວາຣະ |
| ອັນຍະມັນຍະປັດໄຈ | ມີ ໙ ວາຣະ |
| ນິດສະຍະປັດໄຈ | ມີ ໙ ວາຣະ |
| ອຸປະນິດສະຍະປັດໄຈ | ມີ ໙ ວາຣະ |
| ອາເສວະນະປັດໄຈ | ມີ ໙ ວາຣະ |
| ກໍາມະປັດໄຈ | ມີ ໑ ວາຣະ |
| ອາຫາຣະປັດໄຈ | ມີ ໑ ວາຣະ |
| ອິນທະຣິຍະປັດໄຈ | ມີ ໑ ວາຣະ |
| ຊານະປັດໄຈ | ມີ ໑ ວາຣະ |
| ມັກຄະປັດໄຈ | ມີ ໙ ວາຣະ |
| ສໍາປະຍຸດຕະປັດໄຈ | ມີ ໙ ວາຣະ |
| ອັດຖິປັດໄຈ | ມີ ໙ ວາຣະ |
| ນັດຖິປັດໄຈ | ມີ ໙ ວາຣະ |
| ວິຄະຕະປັດໄຈ | ມີ ໙ ວາຣະ |
| ອະວິຄະຕະປັດໄຈ | ມີ ໙ ວາຣະ |

(ອະຣູປະເທົ່ານັ້ນເປັນປັດໄຈ ເພິ່ງຈັດໄວ້ປັດໄຈລະ ໑ ວາຣະ ເພິ່ງປ່ຽນະອາຣໍາມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈໃຫ້ເປັນປັດໄຈລະ ໙ ວາຣະ ແມ່ນໃນປັນຫາວານ ກໍເພິ່ງເພີ່ມທັງໝົດແນວນີ້)

**ຄັນຖະຄັນຖະສໍາປະຍຸດຕະທຸກະ ຈົບ**

# ໓໑. ຄັນຖະວິບປະຍຸດຕະຄັນຖະນິຍະທຸກະ ໑. ປະຕິດຈະວານ

## ເຫຕຸປັດໄຈ

[໑໑໗] ສະພາວະທຳທີ່ວິບປະຍຸດຈາກຄັນຖະ ແຕ່ເປັນອາລົມຂອງຄັນຖະອາໄສສະພາວະທຳທີ່ວິບປະຍຸດຈາກຄັນຖະ ແຕ່ເປັນອາລົມຂອງຄັນຖະເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບ ອາໄສຂັນ ໑ ທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ ອາໄສມະຫາພູຕະຮູບ ໑ ຯລຯ (ເພິ່ງຂະຫຍາຍໃຫ້ພິສະດານເໝືອນໂລກິຍະທຸກະ ໃນຈູລັນຕະຣະທຸກະ ບໍ່ມີຂໍ້ແຕກຕ່າງກັນ)

**ຄັນຖະວິບປະຍຸດຕະຄັນຖະນິຍະທຸກະ ຈົບ**

**ຄັນຖະໂຄດສະກະ ຈົບ**

# ໙-໗. ໂອຄະ - ໂຍຄະໂຄດສະກະ

# ໓໒ - ໔໓. ໂອຄະທຸກະເປັນຕົ້ນ

[໑] ສະພາວະທຳທີ່ເປັນໂອຄະອາໄສສະພາວະທຳທີ່ເປັນໂອຄະເກີດຂຶ້ນຍ້ອນເຫຕຸປັດໄຈ ຯລຯ

[໒] ສະພາວະທຳທີ່ເປັນໂຍຄະອາໄສສະພາວະທຳທີ່ເປັນໂຍຄະເກີດຂຶ້ນຍ້ອນເຫຕຸປັດໄຈ ຯລຯ

(ໂຄດສະກະແມ່ນທັງ ໒ ເໝືອນກັບອາສະວະໂຄດສະກະ ບໍ່ມີຂໍ້ແຕກຕ່າງກັນ)

**ໂອຄະໂຍຄະໂຄດສະກະ ຈົບ**

# ໗. ນິວະຣະນະໂຄດສະກະ

## ໔໔. ນິວະຣະນະທຸກະ ໑. ປະຕິດຈະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໑] ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນອາໄສກາມສັນທະນິວອນເກີດຂຶ້ນ ອຸດທັດຈະນິວອນແລະອະວິດຊານິວອນອາໄສກາມສັນທະນິວອນເກີດຂຶ້ນ ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນອາໄສພະຍາບາດນິວອນເກີດຂຶ້ນ ອຸດທັດຈະນິວອນ ແລະອະວິດຊານິວອນອາໄສພະຍາບາດນິວອນເກີດຂຶ້ນ ຖີນະມິດທະນິວອນ ອຸດທັດຈະນິວອນ ກຸກກຸດຈະນິວອນ ແລະອະວິດຊານິວອນອາໄສພະຍາບາດນິວອນເກີດຂຶ້ນ ອຸດທັດຈະນິວອນ ກຸກກຸດຈະນິວອນ ແລະອະວິດຊານິວອນອາໄສພະຍາບາດນິວອນເກີດຂຶ້ນ ອຸດທັດຈະນິວອນອາໄສວິຈິກິດສານິວອນເກີດຂຶ້ນ ອະວິດຊານິວອນອາໄສອຸດທັດຈະນິວອນເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບອາໄສນິວອນເກີດຂຶ້ນ (໒)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຖີນະມິດທະນິວອນ ອຸດທັດຈະນິວອນ ອະວິດຊານິວອນ ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບອາໄສກາມສັນທະນິວອນເກີດຂຶ້ນ (ເພິ່ງຜູກເປັນຈັກກະໄນ) (໓)

[໒] ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ບໍ່ເປັນນິວອນເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ໃນປະຕິສົນທິຂະນະ ຯລຯ (໑)

ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ນິວອນອາໄສຂັນທີ່ບໍ່ເປັນນິວອນເກີດຂຶ້ນ (໒)

ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນ ອາໄສສະພາວະທຳທີ່ບໍ່ເປັນນິວອນເກີດຂຶ້ນ ຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ນິວອນແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ບໍ່ເປັນນິວອນເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ (໓)

[໓] ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນອາໄສກາມສັນທະນິວອນ ແລະສຳປະຍຸດຕະຂັນເກີດຂຶ້ນ (ເພິ່ງຜູກເປັນຈັກກະໄນ) (໑)

ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເກີດຂຶ້ນ ຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບອາໄສຂັນ ໑ ທີ່ບໍ່ເປັນນິວອນແລະອາໄສນິວອນເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ ຈິດຕະສະມຸດຖານຮູບອາໄສນິວອນແລະອາໄສມະຫາພູຕະຮູບເກີດຂຶ້ນ (໒)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ຖີນະມິດທະນິວອນ ອຸດທັດຈະນິວອນແລະອະວິດຊານິວອນອາໄສຂັນ ໑ ທີ່ບໍ່ເປັນນິວອນແລະອາໄສກາມສັນທະນິວອນເກີດຂຶ້ນ ຯລຯ ອາໄສຂັນ ໒ ຯລຯ (ເພິ່ງຜູກເປັນຈັກກະໄນ ຫຍໍ້) (໓)

## ໑. ປັດຈະຍານຸໂລມ ໒. ສັງຂະຍາວານ

### ສຸດທະໄນ

| | |
|---|---|
| [໔] ເຫຕຸປັດໄຈ | ມີ ໙ ວາຣະ |
| ອາຣໍາມະນະປັດໄຈ | ມີ ໙ ວາຣະ |
| ອະທິປະຕິປັດໄຈ | ມີ ໙ ວາຣະ |
| ອະນັນຕະຣະປັດໄຈ | ມີ ໙ ວາຣະ |
| ສະມະນັນຕະຣະປັດໄຈ | ມີ ໙ ວາຣະ |

(ທຸກປັດໄຈມີປັດໄຈລະ ໙ ວາຣະ)

| | |
|---|---|
| ວິປາກະປັດໄຈ | ມີ ໑ ວາຣະ |
| ອາຫາຣະປັດໄຈ | ມີ ໙ ວາຣະ ຯລຯ |
| ອະວິຄະຕະປັດໄຈ | ມີ ໙ ວາຣະ |

**ອະນຸໂລມ ຈົບ**

# ៤. ປັດຈະຍະປັດຈະນີຍະ ១. ວິພັງຄະວານ

## ນະເຫຕຸປັດໄຈ

[៥] ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນເກີດຂຶ້ນ ຍ້ອນນະເຫຕຸປັດໄຈ ໄດ້ແກ່ ອະວິດຊານິວອນອາໄສວິຈິກິດສານິວອນເກີດຂຶ້ນ ອະວິດຊານິວອນອາໄສອຸດທັດຈະນິວອນເກີດຂຶ້ນ (១)

ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ຂັນ ៣ ແລະຈິດຕະສະມຸດຖານຮູບອາໄສຂັນ ១ ທີ່ບໍ່ມີເຫດເຊິ່ງບໍ່ເປັນນິວອນເກີດຂຶ້ນ ຯລຯ ອາໄສຂັນ ៤ ຯລຯ ໃນປະຕິສົນທິຂະນະທີ່ເປັນອະເຫຕຸກະ ຯລຯ (ເພິ່ງເພີ່ມຂໍ້ຄວາມຈົນເຖິງອະສັນຍະສັດຕະພົມ) (១)

ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ອະວິດຊານິວອນອາໄສຂັນທີ່ປະກອບດ້ວຍວິຈິກິດສາ ແລະທີ່ປະກອບດ້ວຍອຸດທັດຈະເກີດຂຶ້ນ (៤)

[៦] ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ອະວິດຊານິວອນອາໄສວິຈິກິດສານິວອນແລະສຳປະຍຸດຕະຂັນເກີດຂຶ້ນ ອະວິດຊານິວອນອາໄສອຸດທັດຈະນິວອນ ແລະສຳປະຍຸດຕະຂັນເກີດຂຶ້ນ (១)

## ນະອາຣົມມະນະປັດໄຈເປັນຕົ້ນ

[៧] ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນເກີດຂຶ້ນ ຍ້ອນນະອາຣົມມະນະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສນິວອນເກີດຂຶ້ນ (១)

ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ບໍ່ເປັນນິວອນເກີດຂຶ້ນ ຍ້ອນນະອາຣົມມະນະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສຂັນທີ່ບໍ່ເປັນນິວອນເກີດຂຶ້ນ ໃນປະຕິສົນທິຂະນະ ຯລຯ (ເພິ່ງເພີ່ມຂໍ້ຄວາມຈົນເຖິງອະສັນຍະສັດຕະພົມ) (១)

ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເກີດຂຶ້ນ ຍ້ອນນະອາຣົມມະນະປັດໄຈ ໄດ້ແກ່ ຈິດຕະສະມຸດຖານຮູບອາໄສນິວອນແລະສຳປະຍຸດຕະຂັນເກີດຂຶ້ນ (ຫຍໍ້) ຍ້ອນນະອະທິປະຕິປັດໄຈ ຍ້ອນນະອະນັນຕະຣະປັດໄຈ ຍ້ອນນະສະມະນັນຕະຣະປັດໄຈ ຍ້ອນນະອັນຍະມັນຍະປັດໄຈ ຍ້ອນນະອຸປະນິດສະຍະປັດໄຈ

## ນະປຸເຣຊາຕະປັດໄຈ

[໗] ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນເກີດຂຶ້ນຍ້ອນນະປຸເຣຊາຕະປັດໄຈ ໄດ້ແກ່ ໃນອະຣູບປາວະຈອນພູມ ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນອາໄສກາມສັນທະນິວອນເກີດຂຶ້ນ ໃນອະຣູບປາວະຈອນພູມ ອຸດທັດຈະນິວອນ ແລະອະວິດຊານິວອນ ອາໄສກາມສັນທະນິວອນເກີດຂຶ້ນ ໃນອະຣູບປາວະຈອນພູມ ອຸດທັດຈະນິວອນ ແລະອະວິດຊານິວອນອາໄສວິຈິກິດສານິວອນເກີດຂຶ້ນ ໃນອະຣູບປາວະຈອນພູມ ອະວິດຊານິວອນອາໄສອຸດທັດຈະນິວອນເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນເກີດຂຶ້ນ ຍ້ອນນະປຸເຣຊາຕະປັດໄຈ ໄດ້ແກ່ ໃນອະຣູບປາວະຈອນພູມ ສຳປະຍຸດຕະຂັນອາໄສນິວອນເກີດຂຶ້ນ ຈິດຕະສະມຸດຖານຣູບ ອາໄສນິວອນເກີດຂຶ້ນ (ເພິ່ງຂະຫຍາຍວາຣະທີ່ເຫຼືອແມ່ນທັງໝົດໃຫ້ພິສະດານເພິ່ງຈັດອະຣູບໄວ້ກ່ອນ ຈັດຣູບໄວ້ຕາມທີ່ຈະມີໄດ້ໃນພາຍຫຼັງ)

[໘] ສະພາວະທຳທີ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນນະປຸເຣຊາຕະປັດໄຈ ໄດ້ແກ່ ໃນອະຣູບປາວະຈອນພູມ ຖີນະມິດທະນິວອນ ແລະອຸດທັດຈະນິວອນອາໄສຂັນທີ່ບໍ່ເປັນນິວອນ ແລະອາໄສກາມສັນທະນິວອນເກີດຂຶ້ນ (ເພິ່ງຜູກເປັນຈັກກະໄນ) (໑)

ສະພາວະທຳທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນນະປຸເຣຊາຕະປັດໄຈ ໄດ້ແກ່ ໃນອະຣູບປາວະຈອນພູມ ຂັນ ໓ ອາໄສຂັນ ໑ ທີ່ບໍ່ເປັນນິວອນ ແລະອາໄສນິວອນເກີດຂຶ້ນ ໗ລ໗ ອາໄສຂັນ ໒ ໗ລ໗ ຈິດຕະສະມຸດຖານຣູບອາໄສນິວອນ ແລະສຳປະຍຸດຕະຂັນເກີດຂຶ້ນ ຈິດຕະສະມຸດຖານຣູບອາໄສນິວອນ ແລະມະຫາພູຕະຣູບເກີດຂຶ້ນ (໒)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນອາໄສສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນເກີດຂຶ້ນຍ້ອນນະປຸເຣຊາຕະປັດໄຈ ໄດ້ແກ່ ໃນອະຣູບປາວະຈອນພູມ ຂັນ ໓ ຖີນະມິດທະນິວອນ ອຸດທັດຈະນິວອນແລະອະວິດຊານິວອນອາໄສຂັນ ໑ ທີ່ບໍ່ເປັນນິວອນແລະອາໄສກາມສັນທະນິວອນເກີດຂຶ້ນ (ເພິ່ງຜູກເປັນຈັກກະໄນ ຫຍໍ້) (໓)

## ໒. ປັດຈະຍະປັດຈະນີຍະ ໒. ສັງຂະຍາວານ

### ສຸດທະໄນ

[໑໐] ນະເຫຕຸປັດໄຈ ມີ ໔ ວາຣະ

| | |
|---|---|
| ນະອາຣົາມະນະປັດໄຈ | ມີ ໓ ວາຣະ |
| ນະອະທິປະຕິປັດໄຈ | ມີ ໙ ວາຣະ |
| ນະອະນັນຕະຣະປັດໄຈ | ມີ ໓ ວາຣະ |
| ນະສະມະນັນຕະຣະປັດໄຈ | ມີ ໓ ວາຣະ |
| ນະອັນຍະມັນຍະປັດໄຈ | ມີ ໓ ວາຣະ |
| ນະອຸປະນິດສະຍະປັດໄຈ | ມີ ໓ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ ໙ ວາຣະ |
| ນະປັດສາຊາຕະປັດໄຈ | ມີ ໙ ວາຣະ |
| ນະອາເສວະນະປັດໄຈ | ມີ ໙ ວາຣະ |
| ນະກໍາມະປັດໄຈ | ມີ ໓ ວາຣະ |
| ນະວິປາກະປັດໄຈ | ມີ ໙ ວາຣະ |
| ນະອາຫາຣະປັດໄຈ | ມີ ໑ ວາຣະ |
| ນະອິນທະຣິຍະປັດໄຈ | ມີ ໑ ວາຣະ |
| ນະຊານະປັດໄຈ | ມີ ໑ ວາຣະ |
| ນະມັກຄະປັດໄຈ | ມີ ໑ ວາຣະ |
| ນະສໍາປະຍຸດຕະປັດໄຈ | ມີ ໓ ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ ໙ ວາຣະ |
| ໂນນັດຖິປັດໄຈ | ມີ ໓ ວາຣະ |
| ໂນວິຄະຕະປັດໄຈ | ມີ ໓ ວາຣະ |

## ໓. ປັດຈະຍານຸໂລມປັດຈະນີຍະ

| | | | |
|---|---|---|---|
| [໑໑] | ນະອາຣົາມະນະປັດໄຈ | ກັບເຫຕຸປັດໄຈ | ມີ ໓ ວາຣະ |
| | ນະອະທິປະຕິປັດໄຈ | ,, | ມີ ໙ ວາຣະ (ຫຍໍ້) |

## ໔. ປັດຈະຍະປັດຈະນີຍານຸໂລມ

| | | | |
|---|---|---|---|
| [໑໔] | ອາຣົາມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໔ ວາຣະ ຯລຯ |
| | ມັກຄະປັດໄຈ | ,, | ມີ ໓ ວາຣະ ຯລຯ |
| | ອະວິຄະຕະປັດໄຈ | ,, | ມີ ໔ ວາຣະ |

(ເພິ່ງຂະຫຍາຍສະຫະຊາຕະວານໃຫ້ພິສະດານແນວນີ້)

# ໔໔. ນິວະຣະນະທຸກະ ໓. ປັດຈະຍະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໑໓] ສະພາວະທຳທີ່ເປັນນິວອນເຮັດສະພາວະທຳທີ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ມີ ໓ ວາຣະ

ສະພາວະທຳທີ່ບໍ່ເປັນນິວອນເຮັດສະພາວະທຳທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບເຮັດຂັນ ໑ ທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນ ຯລຯ (ເພິ່ງເພີ່ມຂໍ້ຄວາມຈົນເຖິງມະຫາພູຕະຮູບທີ່ເປັນພາຍໃນ) ຂັນທີ່ບໍ່ເປັນນິວອນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (໑)

ສະພາວະທຳທີ່ເປັນນິວອນເຮັດສະພາວະທຳທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ນິວອນເຮັດຂັນທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນ ນິວອນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (໒)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເຮັດສະພາວະທຳທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ນິວອນແລະຈິດຕະສະມຸດຖານຮູບເຮັດຂັນ ໑ ທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ເຮັດຂັນ ໒ ຯລຯ ນິວອນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ຈິດຕະສະມຸດຖານຮູບເຮັດມະຫາພູຕະຮູບໃຫ້ເປັນປັດໄຈເກີດຂຶ້ນ ນິວອນແລະສຳປະຍຸດຕະຂັນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (໓)

[໑໔] ສະພາວະທຳທີ່ເປັນນິວອນເຮັດສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນເຮັດກາມສັນທະນິວອນ ແລະສຳປະຍຸດຕະຂັນໃຫ້ເປັນປັດໄຈເກີດຂຶ້ນ (ເພິ່ງຜູກເປັນຈັກກະໄນ) ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນເຮັດກາມສັນທະນິວອນ ແລະຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (ເພິ່ງຜູກເປັນຈັກກະໄນ) (໑)

ສະພາວະທຳທີ່ບໍ່ເປັນນິວອນເຮັດສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບເຮັດຂັນ ໑ ທີ່ບໍ່ເປັນນິວອນແລະເຮັດນິວອນໃຫ້ເປັນປັດໄຈເກີດຂຶ້ນ ຯລຯ ເຮັດຂັນ ໒ ຯລຯ ສຳປະຍຸດຕະຂັນເຮັດນິວອນ ແລະຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ຈິດຕະສະມຸດຖານຮູບເຮັດນິວອນ ແລະສຳ

ປະຍຸດຕະຂັນໃຫ້ເປັນປັດໄຈເກີດຂຶ້ນ ຈິດຕະສະມຸດຖານຮູບເຮັດນິວອນແລະເຮັດມະຫາພູຕະຮູບໃຫ້ເປັນປັດໄຈເກີດຂຶ້ນ (໔)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເຮັດສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນເຮັດຂັນ ໑ ທີ່ບໍ່ເປັນນິວອນ ແລະເຮັດການສັນທະນິວອນໃຫ້ເປັນປັດໄຈເກີດຂຶ້ນ ໗ລ໗ ເຮັດຂັນ ໔ ໗ລ໗ (ເພິ່ງຜູກເປັນຈັກກະໄນ) ຖີນະມິດທະນິວອນ ອຸດທັດຈະນິວອນ ອະວິດຊານິວອນແລະສຳປະຍຸດຕະຂັນເຮັດການສັນທະນິວອນ ແລະຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (ເພິ່ງຜູກເປັນຈັກກະໄນ ຫຍໍ້) (໓)

## ໑. ປັດຈະຍານຸໂລມ ໔. ສັງຂະຍາວານ

| | |
|---|---|
| [໑໕] ເຫຕຸປັດໄຈ | ມີ ໙ ວາຣະ |
| ອາຣົາມະນະປັດໄຈ | ມີ ໙ ວາຣະ |

(ທຸກປັດໄຈ ມີປັດໄຈລະ ໙ ວາຣະ)

| | |
|---|---|
| ວິປາກະປັດໄຈ | ມີ ໑ ວາຣະ ໗ລ໗ |
| ອະວິຄະຕະປັດໄຈ | ມີ ໙ ວາຣະ |

**ອະນຸໂລມ ຈົບ**

## ໔. ປັດຈະຍະປັດຈະນີຍະ ໑. ວິພັງຄະວານ

## ນະເຫຕຸປັດໄຈ

[໑໖] ສະພາວະທຳທີ່ເປັນນິວອນເຮັດສະພາວະທຳທີ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ອະວິດຊານິວອນເຮັດວິຈິກິດສານິວອນໃຫ້ເປັນປັດໄຈເກີດຂຶ້ນ ອະວິດຊານິວອນເຮັດອຸດທັດຈະນິວອນໃຫ້ເປັນປັດໄຈເກີດຂຶ້ນ (໑)

ສະພາວະທຳທີ່ບໍ່ເປັນນິວອນເຮັດສະພາວະທຳທີ່ບໍ່ເປັນນິວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຮູບເຮັດຂັນ ໑ ທີ່ບໍ່ມີເຫດເຊິ່ງບໍ່ເປັນນິວອນເກີດຂຶ້ນ ໗ລ໗ ເຮັດຂັນ ໔ ໗ລ໗ (ເພິ່ງເພີ່ມຂໍ້ຄວາມຈົນເຖິງອະສັນຍະສັດຕະພົມ) ຈັກຂຸວິນຍານເຮັດຈັກຂາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ໗ລ໗ ກາຍວິນຍານເຮັດກາຍາຍະຕະນະໃຫ້ເປັນປັດໄຈເກີດຂຶ້ນ ຂັນທີ່ບໍ່ມີເຫດເຊິ່ງບໍ່ເປັນນິວອນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (໑)

ສະພາວະທຳທີ່ເປັນນີວອນເຮັດສະພາວະທຳທີ່ບໍ່ເປັນນີວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ອະວິດຊານີວອນເຮັດຂັນທີ່ປະກອບດ້ວຍວິຈິກິດສາແລະທີ່ປະກອບດ້ວຍອຸດທັດຈະໃຫ້ເປັນປັດໄຈເກີດຂຶ້ນ ອະວິດຊານີວອນເຮັດຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (໔)

[໑໗] ສະພາວະທຳທີ່ເປັນນີວອນເຮັດສະພາວະທຳທີ່ເປັນນີວອນ ແລະທີ່ບໍ່ເປັນນີວອນໃຫ້ເປັນປັດໄຈເກີດຂຶ້ນຍ້ອນນະເຫຕຸປັດໄຈ ໄດ້ແກ່ ອະວິດຊານີວອນເຮັດວິຈິກິດສານີວອນແລະສຳປະຍຸດຕະຂັນໃຫ້ເປັນປັດໄຈເກີດຂຶ້ນ ອະວິດຊານີວອນເຮັດອຸດທັດຈະນີວອນແລະສຳປະຍຸດຕະຂັນໃຫ້ເປັນປັດໄຈເກີດຂຶ້ນ ອະວິດຊານີວອນເຮັດວິຈິກິດສານີວອນແລະຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ ອະວິດຊານີວອນເຮັດອຸດທັດຈະນີວອນ ແລະຫະໄທວັດຖຸໃຫ້ເປັນປັດໄຈເກີດຂຶ້ນ (ຫຍໍ້) (໑)

## ໔. ປັດຈະຍະປັດຈະນີຍະ ໔. ສັງຂະຍາວານ

## ສຸດທະໄນ

| | |
|---|---|
| [໑໘] ນະເຫຕຸປັດໄຈ | ມີ ໔ ວາຣະ |
| ນະອາຣຳມະນະປັດໄຈ | ມີ ໓ ວາຣະ |
| ນະອະທິປະຕິປັດໄຈ | ມີ ໙ ວາຣະ |
| ນະອະນັນຕະຣະປັດໄຈ | ມີ ໓ ວາຣະ |
| ນະສະມະນັນຕະຣະປັດໄຈ | ມີ ໓ ວາຣະ |
| ນະອັນຍະມັນຍະປັດໄຈ | ມີ ໓ ວາຣະ |
| ນະອຸປະນິດສະຍະປັດໄຈ | ມີ ໓ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ ໙ ວາຣະ |
| ນະປັດສາຊາຕະປັດໄຈ | ມີ ໙ ວາຣະ |
| ນະອາເສວະນະປັດໄຈ | ມີ ໙ ວາຣະ |
| ນະກຳມະປັດໄຈ | ມີ ໓ ວາຣະ |
| ນະວິປາກະປັດໄຈ | ມີ ໙ ວາຣະ |
| ນະອາຫາຣະປັດໄຈ | ມີ ໑ ວາຣະ |
| ນະອິນທະຣິຍະປັດໄຈ | ມີ ໑ ວາຣະ |
| ນະຊານະປັດໄຈ | ມີ ໑ ວາຣະ |
| ນະມັກຄະປັດໄຈ | ມີ ໑ ວາຣະ |
| ນະສຳປະຍຸດຕະປັດໄຈ | ມີ ໓ ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ ໙ ວາຣະ |

| | |
|---|---|
| ໂນນັດຖິປັດໄຈ | ມີ ໓ ວາຣະ |
| ໂນວິຄະຕະປັດໄຈ | ມີ ໓ ວາຣະ |

## ໓. ປັດຈະຍານຸໂລມປັດຈະນີຍະ

| | | |
|---|---|---|
| [໑໙] ນະອາຣົາມະນະປັດໄຈ | ກັບເຫຕຸປັດໄຈ | ມີ ໓ ວາຣະ |
| ນະອະທິປະຕິປັດໄຈ | ,, | ມີ ໙ ວາຣະ (ຫຍໍ້) |

## ໔. ປັດຈະຍະປັດຈະນີຍານຸໂລມ

| | | |
|---|---|---|
| [໔໐] ອາຣົາມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໔ ວາຣະ |
| ອະນັນຕະຣະປັດໄຈ | ,, | ມີ ໔ ວາຣະ |
| ສະມະນັນຕະຣະປັດໄຈ | ,, | ມີ ໔ ວາຣະ ຯລຯ |
| ມັກຄະປັດໄຈ | ,, | ມີ ໓ ວາຣະ |
| ອະວິຄະຕະປັດໄຈ | ,, | ມີ ໔ ວາຣະ |

# ໔໔. ນີວະຣະນະທຸກະ ໕. ສັງສັດຖະວານ

## ໑໔. ປັດຈະຍະຈະຕຸກກະໄນ

[໔໑] ສະພາວະທຳທີ່ເປັນນີວອນເກີດຜະສົມກັບສະພາວະທຳທີ່ເປັນນີວອນຍ້ອນເຫຕຸປັດໄຈ ໄດ້ແກ່ ຖີນະມິດທະນີວອນ ອຸດທັດຈະນີວອນ ແລະອະວິດຊານີວອນເກີດຜະສົມກັບການສັນທະນີວອນ (ເພິ່ງຜູກເປັນຈັກກະໄນ ເພິ່ງຂະຫຍາຍນີວອນທັງໝົດໃຫ້ພິສະດານ)

| | |
|---|---|
| [໔໔] ເຫຕຸປັດໄຈ | ມີ ໙ ວາຣະ |
| ອາຣົາມະນະປັດໄຈ | ມີ ໙ ວາຣະ |
| (ທຸກປັດໄຈ ມີປັດໄຈລະ ໙ ວາຣະ) | |
| ວິປາກະປັດໄຈ | ມີ ໑ ວາຣະ ຯລຯ |
| ອະວິຄະຕະປັດໄຈ | ມີ ໙ ວາຣະ |

### ອະນຸໂລມ ຈົບ

[໔໓] ສະພາວະທຳທີ່ເປັນນີວອນເກີດຜະສົມກັບສະພາວະທຳທີ່ເປັນນີວອນ ຍ້ອນນະເຫຕຸປັດໄຈ ໄດ້ແກ່ ອະວິດຊານີວອນເກີດຜະສົມກັບວິຈິກິດສານີວອນ ອະວິດຊານີວອນເກີດຜະສົມກັບອຸດທັດຈະນີວອນ (ຫຍໍ້)

| | |
|---|---|
| [໔໔] ນະເຫຕຸປັດໄຈ | ມີ ໘ ວາຣະ |
| ນະອະທິປະຕິປັດໄຈ | ມີ ໙ ວາຣະ |
| ນະປຸເຣຊາຕະປັດໄຈ | ມີ ໙ ວາຣະ |
| ນະປັດສາຊາຕະປັດໄຈ | ມີ ໙ ວາຣະ |
| ນະອາເສວະນະປັດໄຈ | ມີ ໙ ວາຣະ |
| ນະກຳມະປັດໄຈ | ມີ ໓ ວາຣະ |
| ນະວິປາກະປັດໄຈ | ມີ ໙ ວາຣະ |
| ນະຊານະປັດໄຈ | ມີ ໑ ວາຣະ |
| ນະມັກຄະປັດໄຈ | ມີ ໑ ວາຣະ |
| ນະວິບປະຍຸດຕະປັດໄຈ | ມີ ໙ ວາຣະ |

**ປັດຈະນີຍະ ຈົບ**

(ການນັບ ໔ ຢ່າງນອກນີ້ແລະສຳປະຍຸດຕະວານ ເພິ່ງເພີ່ມແນວນີ້)

# ໔໔. ນິວະຣະນະທຸກະ ກ. ບັນຫາວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໔໕] ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເປັນນິວອນເປັນປັດໄຈ ແກ່ສຳປະຍຸດຕະນິວອນໂດຍເຫຕຸປັດໄຈ (໑)

ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເປັນນິວອນເປັນປັດໄຈ ແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍເຫຕຸປັດໄຈ (໔)

ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ເປັນນິວອນເປັນປັດໄຈແກ່ສຳປະຍຸດຕະຂັນ ນິວອນ ແລະຈິດຕະສະມຸດຖານຮູບໂດຍເຫຕຸປັດໄຈ (໓)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍເຫຕຸປັດໄຈ ໄດ້ແກ່ ເຫດທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍເຫຕຸປັດໄຈ ໃນປະຕິສົນທິຂະນະ ໗ລ໗ (໑)

## ອາຣໍາມະນະປັດໄຈ

[໔໖] ສະພາວະທໍາທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທໍາທີ່ເປັນນິວອນໂດຍອາຣໍາມະນະປັດໄຈ ໄດ້ແກ່ ຍ້ອນຜາຣົບນິວອນ ນິວອນຈຶ່ງເກີດຂຶ້ນ (ເພິ່ງອ້າງບົດທີ່ເປັນມູນ) ຍ້ອນຜາຣົບນິວອນ ຂັນທີ່ບໍ່ເປັນນິວອນຈຶ່ງເກີດຂຶ້ນ (ເພິ່ງອ້າງບົດທີ່ເປັນມູນ) ຍ້ອນຜາຣົບນິວອນ ນິວອນແລະສໍາປະຍຸດຕະຂັນຈຶ່ງເກີດຂຶ້ນ (໓)

[໔໗] ສະພາວະທໍາທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທໍາທີ່ບໍ່ເປັນນິວອນໂດຍອາຣໍາມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວພິຈາລະນາກຸສົນນັ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກຈາກຊານແລ້ວພິຈາລະນາຊານ ຯລຯ ພຣະອະຣິຍະອອກຈາກມັກແລ້ວພິຈາລະນາມັກ ພິຈາລະນາຜົນ ພິຈາລະນານິບພານ ນິບພານເປັນປັດໄຈແກ່ໂຄຕະຣະພູ ໂວທານ ມັກ ຜົນ ແລະອາວັດຊະນະຈິດໂດຍອາຣໍາມະນະປັດໄຈ ພຣະອະຣິຍະພິຈາລະນາກິເລດທີ່ບໍ່ເປັນນິວອນເຊິ່ງລະໄດ້ແລ້ວ ພິຈາລະນາກິເລດທີ່ຂົ່ມໄດ້ແລ້ວ ຯລຯ ຮູ້ກິເລດທີ່ເຄີຍເກີດຂຶ້ນ ຯລຯ ບຸກຄົນເຫັນແຈ້ງຈັກຂຸ ຯລຯ ຫະໄທວັດຖຸ ແລະຂັນທີ່ບໍ່ເປັນນິວອນໂດຍເປັນສະພາວະບໍ່ທ່ຽງ ຯລຯ ໂທມະນັດຈຶ່ງເກີດຂຶ້ນ ບຸກຄົນເຫັນຮູບດ້ວຍທິບພະຈັກຂຸ ຟັງສຽງດ້ວຍທິບພະໂສຕະທາດ ຮູ້ຈິດຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍຈິດທີ່ບໍ່ເປັນນິວອນດ້ວຍເຈໂຕປະຣິຍະຍານ ອາກາສານັນຈາຍະຕະນະເປັນປັດໄຈແກ່ວິນຍານັນຈາຍະຕະນະ ຯລຯ ອາກິນຈັນຍາຍະຕະນະເປັນປັດໄຈແກ່ເນວະສັນຍານາສັນຍາຍະຕະນະ ຯລຯ ຮູປາຍະຕະນະເປັນປັດໄຈແກ່ຈັກຂຸວິນຍານ ຯລຯ ໂຜດຖັບພາຍະຕະນະເປັນປັດໄຈແກ່ກາຍວິນຍານ ຯລຯ ຂັນ ທີ່ບໍ່ເປັນນິວອນເປັນປັດໄຈແກ່ອິດທິວິທະຍານ ເຈໂຕປະຣິຍະຍານ ປຸບເພນິວາສານຸດສະຕິຍານ ຍະຖາກໍາມູປະຄະຍານ ອະນາຄະຕັງສະຍານ ແລະອາວັດຊະນະຈິດໂດຍອາຣໍາມະນະປັດໄຈ (໑)

ສະພາວະທໍາທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທໍາທີ່ເປັນນິວອນໂດຍອາຣໍາມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ຯລຯ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກຈາກຊານ ຯລຯ ຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ແລະຂັນທີ່ບໍ່ເປັນນິວອນ ຍ້ອນຜາຣົບຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິ ຯລຯ ວິຈິກິດສາ ຯລຯ ອຸດທັດຈະ ຯລຯ ໂທມະນັດຈຶ່ງເກີດຂຶ້ນ (໒)

ສະພາວະທໍາທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທໍາທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍອາຣໍາມະນະປັດໄຈ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ຯລຯ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກຈາກຊານ ຯລຯ ຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ແລະຂັນທີ່ບໍ່ເປັນນິວອນ ຍ້ອນຜາຣົບຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນ ນິວອນແລະສໍາປະຍຸດຕະຂັນຈຶ່ງເກີດຂຶ້ນ (໓)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈແກ່ສະພາວະທຳທີ່ເປັນນິວອນໂດຍອາຣຳມະນະປັດໄຈ ມີ ໓ ວາຣະ (ເພິ່ງເພີ່ມຄຳວ່າ ຍ້ອນຜາຣົບ)

## ອະທິປະຕິປັດໄຈ

[໔໗] ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣຳມະນາທິປະຕິ ໄດ້ແກ່ ຍ້ອນເຮັດນິວອນໃຫ້ເປັນອາລົມຢ່າງໜັກແໜ້ນ ນິວອນຈຶ່ງເກີດຂຶ້ນ ມີ ໓ ວາຣະ (ປັດໄຈນີ້ເໝືອນກັບອາຣຳມະນະປັດໄຈ) (໓)

[໔໘] ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິແລະສະຫະຊາຕາທິປະຕິ

ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສີນ ຮັກສາອຸໂປສົດແລ້ວພິຈາລະນາ ກຸສົນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກຈາກຊານ ຯລຯ ພຣະອະຣິຍະອອກຈາກມັກແລ້ວພິຈາລະນາມັກ ຯລຯ ພິຈາລະນາຜົນ ຯລຯ ພິຈາລະນານິບພານ ນິບພານເປັນປັດໄຈແກ່ໂຄຕະຣະພູ ໂວທານ ມັກ ແລະຜົນໂດຍອະທິປະຕິປັດໄຈ ບຸກຄົນຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ແລະຂັນທີ່ບໍ່ເປັນນິວອນໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ບໍ່ເປັນນິວອນເປັນປັດໄຈແກ່ສຳປະຍຸດຕະຂັນ ແລະຈິດຕະສະມຸດຖານຮູບໂດຍອະທິປະຕິປັດໄຈ (໑)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິແລະສະຫະຊາຕາທິປະຕິ

ອາຣຳມະນາທິປະຕິ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສີນ ຮັກສາອຸໂປສົດ ຯລຯ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກຈາກຊານ ຯລຯ ຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ແລະຂັນທີ່ບໍ່ເປັນນິວອນໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ຣາຄະຈຶ່ງເກີດຂຶ້ນ ທິດຖິຈຶ່ງເກີດຂຶ້ນ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທຳທີ່ບໍ່ເປັນນິວອນເປັນປັດໄຈແກ່ສຳປະຍຸດຕະນິວອນໂດຍອະທິປະຕິປັດໄຈ (໒)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍອະທິປະຕິປັດໄຈ ມີ ໒ ຢ່າງ ຄື ອາຣຳມະນາທິປະຕິ ແລະສະຫະຊາຕາທິປະຕິ

ອາຣໍາມະນາທິປະຕິ ໄດ້ແກ່ ບຸກຄົນໃຫ້ທານ ສະມາທານສິນ ຮັກສາອຸໂປສົດ ຯລຯ ພິຈາລະນາກຸສົນທີ່ເຄີຍສັ່ງສົມໄວ້ດີແລ້ວ ຯລຯ ອອກຈາກຊານ ຯລຯ ຍິນດີເພີດເພີນຈັກຂຸ ຯລຯ ຫະໄທວັດຖຸ ແລະຂັນທີ່ບໍ່ເປັນນິວອນໃຫ້ເປັນອາລົມຢ່າງໜັກແໜ້ນ ຍ້ອນເຮັດຄວາມຍິນດີເພີດເພີນຈັກຂຸເປັນຕົ້ນນັ້ນໃຫ້ເປັນອາລົມຢ່າງໜັກແໜ້ນ ນິວອນແລະສໍາປະຍຸດຕະຂັນຈຶ່ງເກີດຂຶ້ນ

ສະຫະຊາຕາທິປະຕິ ໄດ້ແກ່ ອະທິບໍດີທໍາທີ່ບໍ່ເປັນນິວອນເປັນປັດໄຈແກ່ສໍາປະຍຸດຕະຂັນນິວອນ ແລະຈິດຕະສະມຸດຖານຮູບໂດຍອະທິປະຕິປັດໄຈ (໓)

ສະພາວະທໍາທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈແກ່ສະພາວະທໍາທີ່ເປັນນິວອນໂດຍອະທິປະຕິປັດໄຈ ມີຢ່າງດຽວ ຄື ອາຣໍາມະນາທິປະຕິ ມີ ໓ ວາຣະ (ມີສະເພາະອາຣໍາມະນາທິປະຕິປັດໄຈເທົ່ານັ້ນ)

## ອະນັນຕະຣະປັດໄຈ

[໓໐] ສະພາວະທໍາທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທໍາທີ່ເປັນນິວອນໂດຍອະນັນຕະຣະປັດໄຈ ໄດ້ແກ່ ນິວອນທີ່ເກີດກ່ອນ ໆ ເປັນປັດໄຈແກ່ນິວອນທີ່ເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ນິວອນທີ່ເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ບໍ່ເປັນນິວອນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ນິວອນເປັນປັດໄຈແກ່ວຸດຖານະໂດຍອະນັນຕະຣະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ນິວອນທີ່ເກີດກ່ອນ ໆ ເປັນປັດໄຈແກ່ນິວອນແລະສໍາປະຍຸດຕະຂັນທີ່ເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (໓)

[໓໑] ສະພາວະທໍາທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທໍາທີ່ບໍ່ເປັນນິວອນໂດຍອະນັນຕະຣະປັດໄຈ ໄດ້ແກ່ ຂັນທີ່ບໍ່ເປັນນິວອນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ບໍ່ເປັນນິວອນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ຯລຯ ເນວະສັນຍານາສັນຍາຍະຕະນະຂອງທ່ານຜູ້ອອກຈາກນິໂຣດເປັນປັດໄຈ ແກ່ຜົນສະມາບັດໂດຍອະນັນຕະຣະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ຂັນທີ່ບໍ່ເປັນນິວອນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ນິວອນທີ່ເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ອາວັດຊະນະຈິດເປັນປັດໄຈແກ່ນິວອນໂດຍອະນັນຕະຣະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ຂັນທີ່ບໍ່ເປັນນິວອນເຊິ່ງເກີດກ່ອນ ໆ ເປັນປັດໄຈແກ່ນິວອນແລະສໍາປະຍຸດຕະຂັນທີ່ເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ອາວັດຊະນະຈິດເປັນປັດໄຈແກ່ນິວອນ ແລະສໍາປະຍຸດຕະຂັນໂດຍອະນັນຕະຣະປັດໄຈ (໓)

[໓໒] ສະພາວະທໍາທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈແກ່ສະພາວະທໍາທີ່ເປັນນິວອນໂດຍອະນັນຕະຣະປັດໄຈ ໄດ້ແກ່ ນິວອນແລະສໍາປະຍຸດຕະຂັນທີ່ເກີດກ່ອນ ໆ ເປັນປັດໄຈແກ່ ນິວອນທີ່ເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ນິວອນແລະສໍາ

ປະຍຸດຕະຂັນທີ່ເກີດກ່ອນ ໆ ເປັນປັດໄຈແກ່ຂັນທີ່ບໍ່ເປັນນິວອນເຊິ່ງເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ ນິວອນແລະສຳປະຍຸດຕະຂັນເປັນປັດໄຈແກ່ວຸດຖານະໂດຍອະນັນຕະຣະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ນິວອນແລະສຳປະຍຸດຕະຂັນທີ່ເກີດກ່ອນ ໆ ເປັນປັດໄຈແກ່ນິວອນແລະສຳປະຍຸດຕະຂັນທີ່ເກີດຫຼັງ ໆ ໂດຍອະນັນຕະຣະປັດໄຈ (໓)

## ສະມະນັນຕະຣະປັດໄຈເປັນຕົ້ນ

[໓໓] ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍສະມະນັນຕະຣະປັດໄຈ ເປັນປັດໄຈໂດຍສະຫະຊາຕະປັດໄຈ ເປັນປັດໄຈໂດຍອັນຍະມັນຍະປັດໄຈ ເປັນປັດໄຈໂດຍນິດສະຍະປັດໄຈ

## ອຸປະນິດສະຍະປັດໄຈ

[໓໔] ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ນິວອນເປັນປັດໄຈແກ່ນິວອນໂດຍອຸປະນິດສະຍະປັດ ໄຈ ມີ ໓ ວາຣະ

[໓໕] ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວໃຫ້ທານ ສະມາທານສິນຮັກສາອຸໂປສົດ ຯລຯ ເຮັດຊານໃຫ້ເກີດຂຶ້ນ ຯລຯ ເຮັດວິປັດສະນາ ຯລຯ ມັກ ຯລຯ ອະພິນຍາ ຯລຯ ເຮັດສະມາບັດໃຫ້ເກີດຂຶ້ນ ມີມານະ ຖືທິດຖິ ອາໄສສິນ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ໂທສະ ຯລຯ ໂມຫະ ຯລຯ ມານະ ຯລຯ ທິດຖິ ຯລຯ ຄວາມປາຖະໜາ ຯລຯ ສຸກທາງກາຍ ຯລຯ ທຸກທາງກາຍ ຯລຯ ອຸຕຸ ຯລຯ ໂພຊະນະ ຯລຯ ເສນາສະນະແລ້ວໃຫ້ທານ ຯລຯ ທຳລາຍສົງ ສັດທາ ຯລຯ ເສນາສະນະເປັນປັດໄຈແກ່ສັດທາ ຯລຯ ປັນຍາ ຯລຯ ຣາຄະ ຯລຯ ຄວາມປາຖະໜາ ຯລຯ ສຸກທາງກາຍ ຯລຯ ທຸກທາງກາຍ ຯລຯ ມັກ ຯລຯ ຜົນສະມາບັດໂດຍອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ຯລຯ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວມີມານະ ຖືທິດຖິ ອາໄສສີນ ໆລໆ ເສນາສະນະແລ້ວ ຂ້າສັດ ໆລໆ ທຳລາຍສົງ ສັດທາ ໆລໆ ເສນາສະນະເປັນປັດໄຈແກ່ ຣາຄະ ໆລໆ ຄວາມປາຖະໜາໂດຍອຸປະນິດສະຍະປັດໄຈ (໔)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ໆລໆ

ປະກະຕູປະນິດສະຍະ ໄດ້ແກ່ ບຸກຄົນອາໄສສັດທາແລ້ວມີມານະ ຖືທິດຖິ ອາໄສສີນ ໆລໆ ເສນາສະນະແລ້ວ ຂ້າສັດ ໆລໆ ທຳລາຍສົງ ສັດທາ ໆລໆ ເສນາສະນະເປັນປັດໄຈແກ່ ນິວອນ ແລະສຳປະຍຸດຕະຂັນໂດຍອຸປະນິດສະຍະປັດໄຈ (໓)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອຸປະນິດສະຍະປັດໄຈ ມີ ໓ ຢ່າງ ຄື ອາຣຳມະນູປະນິດສະຍະ ອະນັນຕະຣູປະນິດສະຍະ ແລະປະກະຕູປະນິດສະຍະ ໆລໆ

ປະກະຕູປະນິດສະຍະ ໄດ້ແກ່ ນິວອນແລະສຳປະຍຸດຕະຂັນເປັນປັດໄຈແກ່ນິວອນໂດຍອຸປະນິດສະຍະປັດໄຈ ມີ ໓ ວາຣະ

## ປຸເຣຊາຕະປັດໄຈ

[໓໖] ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍປຸເຣຊາຕະປັດໄຈ ມີ ໔ ຢ່າງ ຄື ອາຣຳມະນະປຸເຣຊາຕະແລະວັດຖຸປຸເຣຊາຕະ

ອາຣຳມະນະປຸເຣຊາຕະ ໄດ້ແກ່ ບຸກຄົນເຫັນແຈ້ງຈັກຂຸ ໆລໆ ຫະໄທວັດຖຸໂດຍເປັນສະພາວະບໍ່ທ່ຽງ ໆລໆ ໂທມະນັດຈຶ່ງເກີດຂຶ້ນ ໆລໆ ມີ ໓ ວາຣະ (ປຸເຣຊາຕະປັດໄຈເໝືອນກັບອາຣຳມະນະປັດໄຈ ສຳລັບສະພາວະທຳທີ່ເປັນກຸສົນແລະອະກຸສົນເພິ່ງຈຳແນກໄວ້)

## ປັດສາຊາຕະປັດໄຈແລະອາເສວະນະປັດໄຈ

[໓໗] ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍປັດສາຊາຕະປັດໄຈ ມີ ໓ ວາຣະ ເປັນປັດໄຈໂດຍອາເສວະນະປັດໄຈ ມີ ໙ ວາຣະ

## ກຳມະປັດໄຈ

[໓໘] ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍກຳມະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະນານາຂະນິກະ

ສະຫະຊາຕະ ໄດ້ແກ່ ເຈດຕະນາທີ່ບໍ່ເປັນນິວອນເປັນປັດໄຈແກ່ສຳປະຍຸດຕະຂັນແລະຈິດຕະສະມຸດຖານຮູບໂດຍກຳມະປັດໄຈ ໃນປະຕິສົນທິຂະນະ ໗ລ໗

ນານາຂະນິກະ ໄດ້ແກ່ ເຈດຕະນາທີ່ບໍ່ເປັນນິວອນເປັນປັດໄຈແກ່ຂັນທີ່ເປັນວິບາກແລະກະຕັດຕະຮູບໂດຍກຳມະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ເຈດຕະນາທີ່ບໍ່ເປັນນິວອນເປັນປັດໄຈແກ່ສຳປະຍຸດຕະນິວອນໂດຍກຳມະປັດໄຈ (ເພິ່ງອ້າງບົດທີ່ເປັນມູນ) ເຈດຕະນາທີ່ບໍ່ເປັນນິວອນເປັນປັດໄຈແກ່ສຳປະຍຸດຕະຂັນ ນິວອນແລະຈິດຕະສະມຸດຖານຮູບໂດຍກຳມະປັດໄຈ (໓)

## ວິປາກະປັດໄຈເປັນຕົ້ນ

[໓໙] ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍວິປາກະປັດໄຈ ມີ ໑ ວາຣະ ເປັນປັດໄຈໂດຍອາຫາຣະປັດໄຈ ເປັນປັດໄຈໂດຍອິນທະຣິຍະປັດໄຈ ເປັນປັດໄຈໂດຍຊານະປັດໄຈ ເປັນປັດໄຈໂດຍມັກຄະປັດໄຈ ເປັນປັດໄຈໂດຍສຳປະຍຸດຕະປັດໄຈ

## ວິບປະຍຸດຕະປັດໄຈ

[໔໐] ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍວິບປະຍຸດຕະປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ (ເພິ່ງເພີ່ມ ໔ ວາຣະທີ່ເຫຼືອແນວນີ້)

## ອັດຖິປັດໄຈ

[໔໑] ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອັດຖິປັດໄຈ ໄດ້ແກ່ ກາມສັນທະນິວອນເປັນປັດໄຈແກ່ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນ ໂດຍອັດຖິປັດໄຈ (ເພິ່ງຜູກເປັນຈັກກະໄນ) (໑)

ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປັດສາຊາຕະ (ໂດຍໄນນີ້ ບົດທີ່ມີນິວອນເປັນມູນ ມີ ໓ ວາຣະ) (໓)

[໔໔] ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອັດຖິປັດໄຈ ມີ ໕ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ (ຫຍໍ້) (໑)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ (ຫຍໍ້) (໔)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ (ຫຍໍ້) (໓)

[໔໓] ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ກາມສັນທະນິວອນແລະສຳປະຍຸດຕະຂັນເປັນປັດໄຈແກ່ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນໂດຍອັດຖິປັດໄຈ ກາມສັນທະນິວອນແລະຫະໄທວັດຖຸເປັນປັດໄຈແກ່ຖີນະມິດທະນິວອນ ອຸດທັດຈະນິວອນ ແລະອະວິດຊານິວອນໂດຍອັດຖິປັດໄຈ (໑)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອັດຖິປັດໄຈ ມີ ໕ ຢ່າງ ຄື ສະຫະຊາຕະ ປຸເຣຊາຕະ ປັດສາຊາຕະ ອາຫາຣະ ແລະອິນທະຣິຍະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ບໍ່ເປັນນິວອນແລະນິວອນເປັນປັດໄຈແກ່ຂັນ ໓ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຯລຯ ຂັນ ໔ ຯລຯ ນິວອນແລະຫະໄທວັດຖຸເປັນປັດໄຈແກ່ຂັນທີ່ບໍ່ເປັນນິວອນໂດຍອັດຖິປັດໄຈ ນິວອນແລະສຳປະຍຸດຕະຂັນເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ນິວອນແລະມະຫາພູຕະຮູບເປັນປັດໄຈແກ່ຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ນິວອນແລະສຳປະຍຸດຕະຂັນເປັນປັດໄຈແກ່ກາຍນີ້ທີ່ເກີດກ່ອນໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ນິວອນ ສຳປະຍຸດຕະຂັນ ແລະກະວະລິງກາຣາຫານເປັນ ປັດໄຈແກ່ກາຍນີ້ໂດຍອັດຖິປັດໄຈ

ປັດສາຊາຕະ ໄດ້ແກ່ ນິວອນ ສຳປະຍຸດຕະຂັນ ແລະຮູບຊີວິຕິນຊີເປັນປັດໄຈແກ່ກະຕັດຕະຮູບໂດຍອັດຖິປັດໄຈ (໔)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍອັດຖິປັດໄຈ ມີ ໔ ຢ່າງ ຄື ສະຫະຊາຕະແລະປຸເຣຊາຕະ

ສະຫະຊາຕະ ໄດ້ແກ່ ຂັນ ໑ ທີ່ບໍ່ເປັນນິວອນ ແລະກາມສັນທະນິວອນເປັນປັດໄຈແກ່ຂັນ ໓ ຖີນະມິດທະນິວອນ ອຸດທັດຈະນິວອນ ອະວິດຊານິວອນ ແລະຈິດຕະສະມຸດຖານຮູບໂດຍອັດຖິປັດໄຈ ຂັນ ໔ ຯລຯ ກາມສັນທະນິວອນແລະຫະໄທວັດຖຸເປັນປັດໄຈແກ່ຖີນະມິດທະນິວອນ ອຸດທັດຈະນິວອນ ອະວິດຊານິວອນ ແລະສຳປະຍຸດຕະຂັນໂດຍອັດຖິປັດໄຈ (ເພິ່ງຜູກເປັນຈັກກະໄນ) (໓)

# ໑. ປັດຈະຍານຸໂລມ ໘. ສັງຂະຍາວານ

## ສຸດທະໄນ

[໔໔] ເຫຕຸປັດໄຈ ມີ ໔ ວາຣະ
ອາຣຳມະນະປັດໄຈ ມີ ໙ ວາຣະ
ອະທິປະຕິປັດໄຈ ມີ ໙ ວາຣະ
ອະນັນຕະຣະປັດໄຈ ມີ ໙ ວາຣະ
ສະມະນັນຕະຣະປັດໄຈ ມີ ໙ ວາຣະ
ສະຫະຊາຕະປັດໄຈ ມີ ໙ ວາຣະ
ອັນຍະມັນຍະປັດໄຈ ມີ ໙ ວາຣະ
ນິດສະຍະປັດໄຈ ມີ ໙ ວາຣະ
ອຸປະນິດສະຍະປັດໄຈ ມີ ໙ ວາຣະ
ປຸເຣຊາຕະປັດໄຈ ມີ ໓ ວາຣະ
ປັດສາຊາຕະປັດໄຈ ມີ ໓ ວາຣະ
ອາເສວະນະປັດໄຈ ມີ ໙ ວາຣະ
ກຳມະປັດໄຈ ມີ ໓ ວາຣະ
ວິປາກະປັດໄຈ ມີ ໑ ວາຣະ
ອາຫາຣະປັດໄຈ ມີ ໓ ວາຣະ
ອິນທະຣິຍະປັດໄຈ ມີ ໓ ວາຣະ
ຊານະປັດໄຈ ມີ ໓ ວາຣະ
ມັກຄະປັດໄຈ ມີ ໓ ວາຣະ
ສຳປະຍຸດຕະປັດໄຈ ມີ ໙ ວາຣະ
ວິບປະຍຸດຕະປັດໄຈ ມີ ໕ ວາຣະ
ອັດຖິປັດໄຈ ມີ ໙ ວາຣະ
ນັດຖິປັດໄຈ ມີ ໙ ວາຣະ
ວິຄະຕະປັດໄຈ ມີ ໙ ວາຣະ
ອະວິຄະຕະປັດໄຈ ມີ ໙ ວາຣະ

**ອະນຸໂລມ ຈົບ**

## ໔. ປັດຈະນີຍຸດທາຣະ

[໔໕] ສະພາວະທຳທີ່ເປັນນິວອນເປັນປັດໄຈແກ່ສະພາວະທຳທີ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະປັດສາຊາຕະປັດໄຈ (໒)

ສະພາວະທຳທີ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (໓)

[໔໖] ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ປຸເຣຊາຕະປັດໄຈ ປັດສາຊາຕະປັດໄຈ ກຳມະປັດໄຈ ອາຫາຣະປັດໄຈ ແລະອິນທະຣິຍະປັດໄຈ (໑)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈແກ່ສະພາວະທຳທີ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະປຸເຣຊາຕະປັດໄຈ (໒)

ສະພາວະທຳທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະປຸເຣຊາຕະປັດໄຈ (໓)

[໔໗] ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (໑)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ບໍ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ອຸປະນິດສະຍະປັດໄຈ ແລະປັດສາຊາຕະປັດໄຈ (໒)

ສະພາວະທຳທີ່ເປັນນິວອນ ແລະທີ່ບໍ່ເປັນນິວອນເປັນປັດໄຈ ແກ່ສະພາວະທຳທີ່ເປັນນິວອນແລະທີ່ບໍ່ເປັນນິວອນໂດຍອາຣຳມະນະປັດໄຈ ສະຫະຊາຕະປັດໄຈ ແລະອຸປະນິດສະຍະປັດໄຈ (໓)

## ໔. ປັດຈະຍະປັດຈະນີຍະ ໔. ສັງຂະຍາວານ

| | |
|---|---|
| [໔໘] ນະເຫຕຸປັດໄຈ | ມີ ໙ ວາຣະ |
| ນະອາຣຳມະນະປັດໄຈ | ມີ ໙ ວາຣະ |
| ນະອະທິປະຕິປັດໄຈ | ມີ ໙ ວາຣະ |

(ທຸກປັດໄຈ ມີປັດໄຈລະ ໙ ວາຣະ)

| | | |
|---|---|---|
| ໂນວິຄະຕະປັດໄຈ | | ມີ ໙ ວາຣະ |
| ໂນອະວິຄະຕະປັດໄຈ | | ມີ ໙ ວາຣະ |

## ໓. ປັດຈະຍານຸໂລມປັດຈະນີຍະ

### ເຫຕຸທຸກະໄນ

| | | |
|---|---|---|
| ນະອາຣໍາມະນະປັດໄຈ | ກັບເຫຕຸປັດໄຈ | ມີ ໔ ວາຣະ ຯລຯ |
| ນະສະມະນັນຕະຣະປັດໄຈ | ,, | ມີ ໔ ວາຣະ |
| ນະອັນຍະມັນຍະປັດໄຈ | ,, | ມີ ໔ ວາຣະ |
| ນະອຸປະນິດສະຍະປັດໄຈ | ,, | ມີ ໔ ວາຣະ ຯລຯ |
| ນະມັກຄະປັດໄຈ | ,, | ມີ ໔ ວາຣະ |
| ນະສໍາປະຍຸດຕະປັດໄຈ | ,, | ມີ ໔ ວາຣະ |
| ນະວິບປະຍຸດຕະປັດໄຈ | ,, | ມີ ໔ ວາຣະ |
| ໂນນັດຖິປັດໄຈ | ,, | ມີ ໔ ວາຣະ |
| ໂນວິຄະຕະປັດໄຈ | ,, | ມີ ໔ ວາຣະ |

## ໔. ປັດຈະຍະປັດຈະນີຍານຸໂລມ

| | | |
|---|---|---|
| [໕໐] ອາຣໍາມະນະປັດໄຈ | ກັບນະເຫຕຸປັດໄຈ | ມີ ໙ ວາຣະ |
| ອະທິປະຕິປັດໄຈ | ,, | ມີ ໙ ວາຣະ |

(ເພິ່ງເພີ່ມບົດອະນຸໂລມມາຕິກາ) ຯລຯ

| | | |
|---|---|---|
| ອະວິຄະຕະປັດໄຈ | ,, | ມີ ໙ ວາຣະ |

**ນິວະຣະນະທຸກະ ຈົບ**

## ໘໕. ນີວະຣະນີຍະທຸກະ ໑. ປະຕິດຈະວານ

[໕໑] ສະພາວະທໍາທີ່ເປັນອາລົມຂອງນິວອນອາໄສສະພາວະທໍາທີ່ເປັນອາລົມຂອງນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ຯລຯ (ເພິ່ງເພີ່ມນີວະຣະນີຍະທຸກະໄວ້ເໝືອນໂລກິຍະທຸກະ ບໍ່ມີຂໍ້ແຕກຕ່າງກັນ)

ນິວອນປະກອບກັບນິວອນ ໗ ຄັ້ງ ຄື

ກາມະສັນທະ ໔ ຄັ້ງ ປະຕິຄະ ໔ ຄັ້ງ

ອຸດທັດຈະແລະວິຈິກິດສາ ໔ ແນວນີ້ ຢ່າງລະຄັ້ງ
(ໄດ້ຈັດມາຕິກາແຫ່ງນິວະຣະນະທຸກະໄວ້ໃນວາຣະນີ້ແລ້ວ)

**ນິວະຣະນີຍະທຸກະ ຈົບ**

# ໔໖. ນິວະຣະນະສຳປະຍຸດຕະທຸກະ ໑. ປະຕິດຈະວານ

## ໑. ປັດຈະຍານຸໂລມ ໑. ວິພັງຄະວານ

### ເຫຕຸປັດໄຈ

[໕໔] ສະພາວະທຳທີ່ສຳປະຍຸດດ້ວຍນິວອນອາໄສສະພາວະທຳທີ່ສຳປະຍຸດດ້ວຍນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ອາໄສຂັນ ໑ ທີ່ສຳປະຍຸດດ້ວຍນິວອນເກີດຂຶ້ນ ຯລຯ ອາໄສຂັນ ໔ ຯລຯ (໑)

ສະພາວະທຳທີ່ວິບປະຍຸດຈາກນິວອນອາໄສສະພາວະທຳທີ່ສຳປະຍຸດດ້ວຍນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຣູບອາໄສຂັນທີ່ສຳປະຍຸດດ້ວຍນິວອນເກີດຂຶ້ນ (໔)

ສະພາວະທຳທີ່ສຳປະຍຸດດ້ວຍນິວອນ ແລະທີ່ວິບປະຍຸດຈາກນິວອນອາໄສສະພາວະທຳທີ່ສຳປະຍຸດດ້ວຍນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຣູບອາໄສຂັນ ໑ ທີ່ສຳປະຍຸດດ້ວຍນິວອນເກີດຂຶ້ນ ຯລຯ ອາໄສຂັນ ໔ ຯລຯ (໓)

[໕໓] ສະພາວະທຳທີ່ວິບປະຍຸດຈາກນິວອນອາໄສສະພາວະທຳທີ່ວິບປະຍຸດຈາກນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຂັນ ໓ ແລະຈິດຕະສະມຸດຖານຣູບອາໄສຂັນ ໑ ທີ່ວິບປະຍຸດຈາກນິວອນເກີດຂຶ້ນ ຯລຯ ອາໄສຂັນ ໔ ຯລຯ ໃນປະຕິສົນທິຂະນະ ຯລຯ (ເພິ່ງເພີ່ມຂໍ້ຄວາມຈົນເຖິງມະຫາພູຕະຣູບທີ່ເປັນພາຍໃນ) (໑)

ສະພາວະທຳທີ່ວິບປະຍຸດຈາກນິວອນອາໄສສະພາວະທຳທີ່ສຳປະຍຸດດ້ວຍນິວອນແລະທີ່ວິບປະຍຸດຈາກນິວອນເກີດຂຶ້ນຍ້ອນເຫຕຸປັດໄຈ ໄດ້ແກ່ ຈິດຕະສະມຸດຖານຣູບອາໄສຂັນທີ່ສຳປະຍຸດ ດ້ວຍນິວອນແລະອາໄສມະຫາພູຕະຣູບເກີດຂຶ້ນ (ຫຍໍ້)

## ໑. ປັດຈະຍານຸໂລມ ໔. ສັງຂະຍາວານ

| | |
|---|---|
| [໕໔] ເຫຕຸປັດໄຈ | ມີ ໕ ວາຣະ |
| ອາຣຳມະນະປັດໄຈ | ມີ ໔ ວາຣະ |
| ອະທິປະຕິປັດໄຈ | ມີ ໕ ວາຣະ ຯລຯ |

